# ພຣະໄຕຣປິດົກພາສາລາວ

## ເຫຼັ້ມທີ ໔໐

# ພຣະອະພິທຳ

## ເຫຼັ້ມທີ ກ

## ທຳມານຸໂລມ ຕິກະປັດຖານ (ພາກ ໑)



ສະບັບຄົ້ນຄົ້ວວັດທາດຫຼວງເໜືອ

ພຸດທະສັກກະຣາດ ໒໕໖໕

# ຄຳປາລົບ

ສືບເນື່ອງ ອາດຕະມາໄດ້ມີໂອກາດມາຊ່ອຍພຣະອາຈານອົງໜຶ່ງເຮັດພຣະໄຕປິດົກສະບັບພາສາບາລີລາວ ອອກມາເປັນເຫຼັ້ມ ຢູ່ທີ່ຫໍທຳມະສະພາ ວັດທາດຫຼວງເໜືອ ໃນປີ ພ.ສ ໒໕໕໕-໒໕໕໗ ເປັນຈຳນວນ ໓໕ ຊຸດ ໑,໕໗໕ ຫົວ ໂດຍມີຍາທ່ານໃຫຍ່ ມະຫາເວດ ມະເສໄນ ເປັນປະທ່ານເກັບກຳຄ່າໃຊ້ຈ່າຍ ຈົບສຳເລັດລົງດ້ວຍດີ ໂດຍມີແຜນການຈັກສືບຕໍ່ແປພຣະໄຕຣປິດົກສະບັບພາສາໄທ ມ.ຈ.ລ. ມາເປັນພາສາລາວ ອາດຕະມາຄຶດເຫັນວ່າເປັນມະຫາບຸນກຸສົນອັນຍິ່ງໃຫຍ່ແກ່ຕົນທີ່ຈະໄດ້ອ່ານ ແລະແປພຣະໄຕຣປິດົກອອກມາເປັນພາສາລາວທັງໝົດ ອັນເປັນໜັງສືທີ່ຮິບໂຮມຄວາມຮູ້ ຄຳສັ່ງສອນຂອງພຣະພຸດທະເຈົ້າທີ່ອາດຕະມາເຄົາລົບ ແລະສັດທາເໜືອສິ່ງອື່ນໃດ ຈຶ່ງໄດ້ຢູ່ສືບຕໍ່ແປໂດຍລຳພັງພຽງອົງດຽວຢູ່ຫໍທຳມະສະພາບ່ອນເກົ່າ ໂດຍມີຄວາມຮູ້ບໍ່ຈົບ ມ ໒ ຄຶດຢ້ານເຮັດຜິດຫຼາຍກວ່າຖືກຢູ່ ແຕ່ອາໃສສັດທາທີ່ມີຢູ່ໃນໂຕ ຈຶ່ງສູ້ຊົນຫາຄວາມຮູ້ເອົາເອງ ຜ່ານໄປ ໓ ປີ ກໍໄດ້ແປພຣະວິໄນປິດົກສຳເລັດໄດ້ ໗ ເຫຼັ້ມ

ແຕ່ຕໍ່ມາໄດ້ເກີດປັນຫາຂຶ້ນໃນການແປພຣະໄຕຣປິດົກສະບັບ ມ.ຈ.ລ ຂອງຣາດສະອານາຈັກໄທມາເປັນພາສາລາວ ໃນຄັ້ງນີ້ ກຽວກັບໂປຣແກຣມທີ່ໃຊ້ແປຢູ່ບໍ່ສາມາດແປງເອກະສານຂອງໂປແກຣມເກົ່າໃຫ້ມາເປັນໂປຣແກຣມໃໝ່ໄດ້ ອາດຕະມາຈຶ່ງຕັດໃຈຖິ້ມວຽກທີ່ໄດ້ແປມາ ໗ ເຫຼັ້ມນັ້ນໄປແລ້ວນັບໜຶ່ງໃໝ່ຈົນຜ່ານມາອີກ ໕ ປີ ກໍໄດ້ສຳເລັດລົງໂດຍມີພຣະອາຈານອົງນັ້ນເປັນຜູ້ແກ້ສຳນວນໃຫ້ອີກປີໜຶ່ງ

ຂໍໃຫ້ບຸກຄົນທີ່ຈະນຳເອົາໄປໃຊ້ຮັບຮູ້ໄວ້ວ່າ ເປັນການແປໂດຍສ່ວນບຸກຄົນມີພຽງແຕ່ຄູບາ ໒ ອົງເທົ່ານັ້ນ ໂດຍມີເຈດຕະນາ ກາຍ ຄັດລອກ ໂຄງສ້າງເກົ່າມາແປທັງໝົດ ທັງຫົວຂໍ້ ແລະວັກຄືກັນທັງໝົດ ໒໕ ຫົວ ຕ່າງແຕ່ສາຣະບານ ແລະການຈັດໜ້າ ແລະບໍ່ມີຄຳນຳ

ສະນັ້ນ ອາດຕະມາເອງຜູ້ແປຮູ້ດີວ່າຍັງມີຂໍ້ຜິດພາດຢູ່ຫຼາຍ ບໍ່ວ່າຄຳຜິດ ສຳນວນທີ່ໃຊ້ອ່ອນໄປ ຍ້ອນອາດຕະມາເອງການສຶກສາບໍ່ສູງ ຈຶ່ງຂໍອະໄພໄວ້ໃນທີ່ນີ້ ແລະຂໍແນະນຳໃຫ້ລະມັດລະວັງໃນການນຳໄປໃຊ້ອ້າງອີງ ຫຼື ເຮັດອອກມາເປັນເຫຼັ້ມ ກະລຸນາກວດແກ້ໃໝ່ກ່ອນທັງໝົດ

ສຸດທ້າຍນີ້ ຂໍຂອບໃຈ ລະລຶກຮູ້ບຸນຄຸນຂອງຄະນະຜູ້ແປຕົ້ນສະບັບ ມ.ຈ.ລ ພາສາໄທຍາທ່ານໃຫຍ່ ຖາວອນ ຕາພອນປະເສີດ ເຈົ້າອາທິການວັດທາດຫຼວງເໜືອ ທີ່ອຳນວຍຄວາມສະດວກໃນການເຮັດວຽກ ຄູບາ ບູນ ອົງແນະນຳໃຫ້ໃຊ້ໂປຣແກຣມໃໝ່ເຮັດໃຫ້ແປໄດ້ໄວຂຶ້ນຫຼາຍ ແລະ ພຣະອາຈານຜູ້ຊີ້ນຳເຂົ້າມາເຮັດວຽກແປພຣະໄຕຣປິດົກໃນຄັ້ງນີ້ອີກອົງໜຶ່ງ ເພິ່ນບໍ່ປະສົງອອກນາມຄືອາດຕະມາ ຂໍພຣະສັດທຳຂອງອົງສົມເດັດ ພຣະສຳມາສຳພຸດທະເຈົ້າຈົ່ງເກື້ອກູນແດ່ ເພື່ອນ ເກີດ ແກ່ ເຈັບ ຕາຍ ທຸກຄົນ ທຸກຊັ້ນ ທຸກວັນນະ ທຸກພົບ ທຸກພູມ ເທີ້ນ.

# ສາຣະບານ

# ພຣະໄຕຣປິດົກ

## ເຫຼັ້ມທີ ໔໐

# ພຣະອະພິທຳ

## ເຫຼັ້ມທີ ໗

# ທຳມານຸໂລມ ຕິກະປັດຖານ (ພາກ ໑)

**ຂໍນອບນ້ອມແດ່ ພຣະຜູ້ມີພຣະພາກ ອະຣະຫັນຕະ ສຳມາສຳພຸດທະເຈົ້າ ພຣະອົງນັ້ນ**

# ມາຕິການິກເຂປະວານ

## ໑. ປັດຈະຍຸດເທດ

| | |
|---|---|
| ໑. ເຫຕຸປັດຈະໂຍ | ສະພາວະທຳທີ່ຊ່ອຍອຸປະກາຣະໂດຍຄວາມເປັນເຫດ |
| ໒. ອາຣົາມະນະປັດຈະໂຍ | ສະພາວະທຳທີ່ຊ່ອຍອຸປະກາຣະໂດຍຄວາມເປັນອາລົມ |
| ໓. ອະທິປະຕິປັດຈະໂຍ | ສະພາວະທຳທີ່ຊ່ອຍອຸປະກາຣະໂດຍຄວາມເປັນອະທິບໍດີ |
| ໔. ອະນັນຕະຣະປັດຈະໂຍ | ສະພາວະທຳທີ່ຊ່ອຍອຸປະກາຣະໂດຍຄວາມຕິດຕໍ່ກັນບໍ່ມີລະຫວ່າງຄັ່ນ |
| ໕. ສະມະນັນຕະຣະປັດຈະໂຍ | ສະພາວະທຳທີ່ຊ່ອຍອຸປະກາຣະໂດຍຄວາມຕິດຕໍ່ກັນບໍ່ມີລະຫວ່າງຄັ່ນ ດ້ວຍດີ |
| ໖. ສະຫະຊາຕະປັດຈະໂຍ | ສະພາວະທຳທີ່ຊ່ອຍອຸປະກາຣະໂດຍຄວາມເກີດພ້ອມກັນ |
| ໗. ອັນຍະມັນຍະປັດຈະໂຍ | ສະພາວະທຳທີ່ຊ່ອຍອຸປະກາຣະໂດຍຄວາມເປັນປັດໄຈແກ່ກັນແລະກັນ |

| | |
|---|---|
| ໗. ນິດສະຍະປັດຈະໂຍ | ສະພາວະທຳທີ່ຊ່ອຍອຸປະກາຣະໂດຍຄວາມເປັນທີ່ອາໄສ |
| ໘. ອຸປະນິດສະຍະປັດຈະໂຍ | ສະພາວະທຳທີ່ຊ່ອຍອຸປະກາຣະໂດຍຄວາມເປັນທີ່ອາໄສທີ່ມີກຳລັງ |
| ໑໐. ປຸເຣຊາຕະປັດຈະໂຍ | ສະພາວະທຳທີ່ຊ່ອຍອຸປະກາຣະໂດຍຄວາມເກີດກ່ອນ |
| ໑໑. ປັດສາຊາຕະປັດຈະໂຍ | ສະພາວະທຳທີ່ຊ່ອຍອຸປະກາຣະໂດຍຄວາມເກີດພາຍຫຼັງ |
| ໑໔. ອາເສວະນະປັດຈະໂຍ | ສະພາວະທຳທີ່ຊ່ອຍອຸປະກາຣະໂດຍຄວາມເສບຢູ່ປະຈຳ ໆ |
| ໑໓. ກຳມະປັດຈະໂຍ | ສະພາວະທຳທີ່ຊ່ອຍອຸປະກາຣະໂດຍຄວາມເປັນກຳ |
| ໑໔. ວິປາກະປັດຈະໂຍ | ສະພາວະທຳທີ່ຊ່ອຍອຸປະກາຣະໂດຍຄວາມເປັນວິບາກ |
| ໑໕. ອາຫາຣະປັດຈະໂຍ | ສະພາວະທຳທີ່ຊ່ອຍອຸປະກາຣະໂດຍຄວາມເປັນອາຫານ |
| ໑໖. ອິນທະຣິຍະປັດຈະໂຍ | ສະພາວະທຳທີ່ຊ່ອຍອຸປະກາຣະໂດຍຄວາມເປັນອິນຊີ |
| ໑໗. ຊານະປັດຈະໂຍ | ສະພາວະທຳທີ່ຊ່ອຍອຸປະກາຣະໂດຍຄວາມເປັນຊານ |
| ໑໗. ມັກຄະປັດຈະໂຍ | ສະພາວະທຳທີ່ຊ່ອຍອຸປະກາຣະໂດຍຄວາມເປັນມັກ |
| ໑໘. ສຳປະຍຸດຕະປັດຈະໂຍ | ສະພາວະທຳທີ່ຊ່ອຍອຸປະກາຣະໂດຍຄວາມເປັນການປະກອບ |
| ໔໐. ວິບປະຍຸດຕະປັດຈະໂຍ | ສະພາວະທຳທີ່ຊ່ອຍອຸປະກາຣະໂດຍຄວາມເປັນການບໍ່ປະກອບ |
| ໔໑. ອັດຖິປັດຈະໂຍ | ສະພາວະທຳທີ່ຊ່ອຍອຸປະກາຣະໂດຍຄວາມເປັນພາວະທີ່ຍັງມີຢູ່ |
| ໔໔. ນັດຖິປັດຈະໂຍ | ສະພາວະທຳທີ່ຊ່ອຍອຸປະກາຣະໂດຍຄວາມເປັນພາວະທີ່ບໍ່ມີຢູ່ |

| | |
|---|---|
| ໒໓. ວິຄະຕະປັດຈະໂຍ | ສະພາວະທຳທີ່ຊ່ອຍອຸປະກາຣະໂດຍຄວາມປາດສະຈາກໄປ |
| ໒໔. ອະວິຄະຕະປັດຈະໂຍ | ສະພາວະທຳທີ່ຊ່ອຍອຸປະກາຣະໂດຍຄວາມບໍ່ປາສະຈາກໄປ |

**ປັດຈະຍຸດເທດ ຈົບ**

# ປັດຈະຍະວິພັງຄະວາຣະ

## ໑. ປັດຈະຍະນິດເທດ

[໑] ເຫຕຸປັດໄຈ ໄດ້ແກ່ ເຫດ ເປັນປັດໄຈແກ່ສະພາວະທຳທີ່ສຳປະຍຸດດ້ວຍເຫດແລະຮູບທີ່ມີທຳອັນສຳປະຍຸດດ້ວຍເຫດນັ້ນເປັນສະມຸດຖານໂດຍເຫດປັດໄຈ

[໒] ອາຣົມມະນະປັດໄຈ ໄດ້ແກ່ ຣູປາຍະຕະນະ ເປັນປັດໄຈແກ່ຈັກຂຸວິນຍານທາດແລະສະພາວະທຳທີ່ສຳປະຍຸດດ້ວຍຈັກຂຸວິນຍານທາດນັ້ນໂດຍອາຣົມມະນະປັດໄຈ

ສັດທາຍະຕະນະ ເປັນປັດໄຈແກ່ໂສຕະວິນຍານທາດ ແລະສະພາວະທຳທີ່ສຳປະຍຸດດ້ວຍໂສຕະວິນຍານທາດນັ້ນໂດຍອາຣົມມະນະປັດໄຈ

ຄັນທາຍະຕະນະ ເປັນປັດໄຈແກ່ຄານະວິນຍານທາດ ແລະສະພາວະທຳທີ່ສຳປະຍຸດດ້ວຍຄານະວິນຍານທາດນັ້ນໂດຍອາຣົມມະນະປັດໄຈ

ຣະສາຍະຕະນະ ເປັນປັດໄຈແກ່ຊິວຫາວິນຍານທາດ ແລະສະພາວະທຳທີ່ສຳປະຍຸດດ້ວຍຊິວຫາວິນຍານທາດນັ້ນໂດຍອາຣົມມະນະປັດໄຈ

ໂຜດຖັບພາຍະຕະນະ ເປັນປັດໄຈແກ່ກາຍວິນຍານທາດ ແລະສະພາວະທຳທີ່ສຳປະຍຸດດ້ວຍກາຍວິນຍານທາດນັ້ນໂດຍອາຣົມມະນະປັດໄຈ

ຣູປາຍະຕະນະ ສັດທາຍະຕະນະ ຄັນທາຍະຕະນະ ຣະສາຍະຕະນະ ແລະໂຜດຖັບພາຍະຕະນະເປັນປັດໄຈ ແກ່ມະໂນທາດແລະສະພາວະທຳທີ່ສຳປະຍຸດດ້ວຍມະໂນທາດນັ້ນໂດຍອາຣົມມະນະປັດໄຈ

ສະພາວະທຳທັງປວງ ເປັນປັດໄຈແກ່ມະໂນວິນຍານທາດແລະສະພາວະທຳທີ່ສຳປະຍຸດດ້ວຍມະໂນວິນຍານທາດນັ້ນໂດຍອາຣົມມະນະປັດໄຈ

ສະພາວະທຳທີ່ເປັນຈິດແລະເຈຕະສິກໃດ ໆ ຜາຣົບສະພາວະທຳໃດ ໆ ເກີດຂຶ້ນສະພາວະທຳນັ້ນ ໆ ເປັນປັດໄຈແກ່ສະພາວະທຳທີ່ເປັນຈິດແລະເຈຕະສິກນັ້ນ ໆ ໂດຍອາຣົມມະນະປັດໄຈ

[໗] ອະທິປະຕິປັດໄຈ ໄດ້ແກ່ ສັນທາທິບໍດີເປັນປັດໄຈແກ່ສະພາວະທຳທີ່ສຳປະຍຸດດ້ວຍສັນທະ ແລະຮູບທີ່ມີທຳອັນສຳປະຍຸດດ້ວຍສັນທະນັ້ນເປັນສະມຸດຖານໂດຍອະທິປະຕິປັດໄຈ

ວິຣິຍາທິບໍດີເປັນປັດໄຈ ແກ່ສະພາວະທຳທີ່ສຳປະຍຸດດ້ວຍວິຣິຍະ ແລະຮູບທີ່ມີທຳອັນສຳປະຍຸດ ດ້ວຍວິຣິຍະນັ້ນເປັນສະມຸດຖານໂດຍອະທິປະຕິປັດໄຈ

ຈິດຕາທິບໍດີ ເປັນປັດໄຈແກ່ສະພາວະທຳທີ່ສຳປະຍຸດດ້ວຍຈິດ ແລະຮູບທີ່ມີທຳອັນ ສຳປະຍຸດດ້ວຍຈິດນັ້ນເປັນສະມຸດຖານໂດຍອະທິປະຕິປັດໄຈ

ວິມັງສາທິບໍດີ ເປັນປັດໄຈແກ່ສະພາວະທຳທີ່ສຳປະຍຸດດ້ວຍວິມັງສາ ແລະຮູບທີ່ມີທຳອັນສຳປະຍຸດດ້ວຍວິມັງສານັ້ນເປັນສະມຸດຖານໂດຍອະທິປະຕິປັດໄຈ

ສະພາວະທຳທີ່ເປັນຈິດແລະເຈຕະສິກໃດ ໆ ເຮັດສະພາວະທຳໃດ ໆ ໃຫ້ເປັນອາລົມຢ່າງໜັກແໜ້ນເກີດຂຶ້ນ

ສະພາວະທຳນັ້ນ ໆ ເປັນປັດໄຈແກ່ສະພາວະທຳທີ່ເປັນຈິດ ແລະເຈຕະສິກນັ້ນ ໆ ໂດຍອະທິປະຕິປັດໄຈ

[໘] ອະນັນຕະຣະປັດໄຈ ໄດ້ແກ່ ຈັກຂຸວິນຍານທາດແລະສະພາວະທຳທີ່ສຳປະຍຸດດ້ວຍຈັກຂຸວິນຍານທາດນັ້ນເປັນປັດໄຈແກ່ມະໂນທາດ ແລະສະພາວະທຳທີ່ສຳປະຍຸດດ້ວຍມະໂນທາດນັ້ນໂດຍອະນັນຕະຣະປັດໄຈ

ມະໂນທາດແລະສະພາວະທຳທີ່ສຳປະຍຸດດ້ວຍມະໂນທາດນັ້ນ ເປັນປັດໄຈແກ່ມະໂນວິນຍານທາດ ແລະສະພາວະທຳທີ່ສຳປະຍຸດດ້ວຍມະໂນວິນຍານທາດນັ້ນໂດຍອະນັນຕະຣະປັດໄຈ

ໂສຕະວິນຍານທາດ ແລະສະພາວະທຳທີ່ສຳປະຍຸດດ້ວຍໂສຕະວິນຍານທາດນັ້ນເປັນປັດໄຈແກ່ມະໂນທາດ ແລະສະພາວະທຳທີ່ສຳປະຍຸດດ້ວຍມະໂນທາດນັ້ນ ໂດຍອະນັນຕະຣະປັດໄຈ

ມະໂນທາດແລະສະພາວະທຳທີ່ສຳປະຍຸດດ້ວຍມະໂນທາດນັ້ນ ເປັນປັດໄຈແກ່ມະໂນວິນຍານທາດ ແລະສະພາວະທຳທີ່ສຳປະຍຸດດ້ວຍມະໂນວິນຍານທາດນັ້ນໂດຍອະນັນຕະຣະປັດໄຈ

ຄານະວິນຍານທາດ ແລະສະພາວະທຳທີ່ສຳປະຍຸດດ້ວຍຄານະວິນຍານທາດນັ້ນເປັນປັດໄຈແກ່ມະໂນທາດ ແລະສະພາວະທຳທີ່ສຳປະຍຸດດ້ວຍມະໂນທາດນັ້ນໂດຍອະນັນຕະຣະປັດໄຈ

ມະໂນທາດ ແລະສະພາວະທຳທີ່ສຳປະຍຸດດ້ວຍມະໂນທາດນັ້ນ ເປັນປັດໄຈແກ່ມະໂນວິນຍານທາດ ແລະສະພາວະທຳທີ່ສຳປະຍຸດດ້ວຍມະໂນວິນຍານທາດນັ້ນ ໂດຍອະນັນຕະຣະປັດໄຈ

ຊິວຫາວິນຍານທາດ ແລະສະພາວະທຳທີ່ສຳປະຍຸດດ້ວຍຊິວຫາວິນຍານທາດນັ້ນ ເປັນປັດໄຈແກ່ມະໂນທາດ ແລະສະພາວະທຳທີ່ສຳປະຍຸດດ້ວຍມະໂນທາດນັ້ນໂດຍອະນັນຕະຣະປັດໄຈ

ມະໂນທາດ ແລະສະພາວະທຳທີ່ສຳປະຍຸດດ້ວຍມະໂນທາດນັ້ນ ເປັນປັດໄຈແກ່ມະໂນວິນຍານທາດ ແລະສະພາວະທຳທີ່ສຳປະຍຸດດ້ວຍມະໂນວິນຍານທາດນັ້ນໂດຍອະນັນຕະຣະປັດໄຈ

ກາຍວິນຍານທາດ ແລະສະພາວະທຳທີ່ສຳປະຍຸດດ້ວຍກາຍວິນຍານທາດນັ້ນເປັນປັດໄຈແກ່ມະໂນທາດແລະສະພາວະທຳທີ່ສຳປະຍຸດດ້ວຍມະໂນທາດນັ້ນໂດຍອະນັນຕະຣະປັດໄຈ

ມະໂນທາດແລະສະພາວະທຳທີ່ສຳປະຍຸດດ້ວຍມະໂນທາດນັ້ນ ເປັນປັດໄຈແກ່ມະໂນວິນຍານທາດ ແລະສະພາວະທຳທີ່ສຳປະຍຸດດ້ວຍມະໂນວິນຍານທາດນັ້ນໂດຍອະນັນຕະຣະປັດໄຈ

ສະພາວະທຳທີ່ເປັນກຸສົນເຊິ່ງເກີດກ່ອນ ໆ ເປັນປັດໄຈແກ່ສະພາວະທຳທີ່ເປັນກຸສົນເຊິ່ງເກີດຫຼັງ ໆ ໂດຍອະນັນຕະຣະປັດໄຈ

ສະພາວະທຳທີ່ເປັນກຸສົນເຊິ່ງເກີດກ່ອນ ໆ ເປັນປັດໄຈແກ່ສະພາວະທຳທີ່ເປັນອັບພະຍາກະຕະ ເຊິ່ງເກີດຫຼັງ ໆ ໂດຍອະນັນຕະຣະປັດໄຈ

ສະພາວະທຳທີ່ເປັນອະກຸສົນເຊິ່ງເກີດກ່ອນ ໆ ເປັນປັດໄຈແກ່ສະພາວະທຳທີ່ເປັນອະກຸສົນ ເຊິ່ງເກີດຫຼັງ ໆ ໂດຍອະນັນຕະຣະປັດໄຈ

ສະພາວະທຳທີ່ເປັນອະກຸສົນເຊິ່ງເກີດກ່ອນ ໆ ເປັນປັດໄຈແກ່ສະພາວະທຳທີ່ເປັນອັບພະຍາກະຕະ ເຊິ່ງເກີດຫຼັງ ໆ ໂດຍອະນັນຕະຣະປັດໄຈ

ສະພາວະທຳທີ່ເປັນອັບພະຍາກະຕະເຊິ່ງເກີດກ່ອນ ໆ ເປັນປັດໄຈແກ່ສະພາວະທຳທີ່ເປັນອັບພະຍາກະຕະເຊິ່ງເກີດຫຼັງ ໆ ໂດຍອະນັນຕະຣະປັດໄຈ

ສະພາວະທຳທີ່ເປັນອັບພະຍາກະຕະເຊິ່ງເກີດກ່ອນ ໆ ເປັນປັດໄຈແກ່ສະພາວະທຳທີ່ເປັນກຸສົນເຊິ່ງເກີດຫຼັງ ໆ ໂດຍອະນັນຕະຣະປັດໄຈ

ສະພາວະທຳທີ່ເປັນອັບພະຍາກະຕະເຊິ່ງເກີດກ່ອນ ໆ ເປັນປັດໄຈແກ່ສະພາວະທຳທີ່ເປັນອະກຸສົນເຊິ່ງເກີດຫຼັງ ໆ ໂດຍອະນັນຕະຣະປັດໄຈ

ສະພາວະທຳທີ່ເປັນຈິດແລະເຈຕະສິກໃດ ໆ ເກີດຂຶ້ນໃນລຳດັບແຫ່ງສະພາວະທຳໃດ ໆ ສະພາວະທຳນັ້ນ ໆ ເປັນປັດໄຈແກ່ສະພາວະທຳທີ່ເປັນຈິດແລະເຈຕະສິກນັ້ນ ໆ ໂດຍອະນັນຕະຣະປັດໄຈ

[໕] ສະມະນັນຕະຣະປັດໄຈ ໄດ້ແກ່ ຈັກຂຸວິນຍານທາດແລະສະພາວະທຳທີ່ສຳປະຍຸດດ້ວຍຈັກຂຸວິນຍານທາດນັ້ນ ເປັນປັດໄຈແກ່ມະໂນທາດແລະສະພາວະທຳທີ່ສຳປະຍຸດດ້ວຍມະໂນທາດນັ້ນໂດຍສະມະນັນຕະຣະປັດໄຈ

ມະໂນທາດແລະສະພາວະທຳທີ່ສຳປະຍຸດດ້ວຍມະໂນທາດນັ້ນ ເປັນປັດໄຈແກ່ມະໂນວິນຍານທາດ ແລະສະພາວະທຳທີ່ສຳປະຍຸດດ້ວຍມະໂນວິນຍານທາດນັ້ນໂດຍສະມະນັນຕະຣະປັດໄຈ

ໂສຕະວິນຍານທາດ ແລະສະພາວະທຳທີ່ສຳປະຍຸດດ້ວຍໂສຕະວິນຍານທາດນັ້ນເປັນປັດໄຈ ແກ່ມະໂນທາດແລະສະພາວະທຳທີ່ສຳປະຍຸດດ້ວຍມະໂນທາດນັ້ນໂດຍສະມະນັນຕະຣະປັດໄຈ

ມະໂນທາດແລະສະພາວະທຳທີ່ສຳປະຍຸດດ້ວຍມະໂນທາດນັ້ນ ເປັນປັດໄຈແກ່ມະໂນວິນຍານທາດ ແລະສະພາວະທຳທີ່ສຳປະຍຸດດ້ວຍມະໂນວິນຍານທາດນັ້ນໂດຍສະມະນັນຕະຣະປັດໄຈ

ຄານະວິນຍານທາດ ແລະສະພາວະທຳທີ່ສຳປະຍຸດດ້ວຍຄານະວິນຍານທາດນັ້ນເປັນປັດໄຈແກ່ມະໂນທາດ ແລະສະພາວະທຳທີ່ສຳປະຍຸດດ້ວຍມະໂນທາດນັ້ນໂດຍສະມະນັນຕະຣະປັດໄຈ

ມະໂນທາດ ແລະສະພາວະທຳທີ່ສຳປະຍຸດດ້ວຍມະໂນທາດນັ້ນເປັນປັດໄຈແກ່ມະໂນວິນຍານທາດ ແລະສະພາວະທຳທີ່ສຳປະຍຸດດ້ວຍມະໂນວິນຍານທາດນັ້ນໂດຍສະມະນັນຕະຣະປັດໄຈ

ຊິວຫາວິນຍານທາດ ແລະສະພາວະທຳທີ່ສຳປະຍຸດດ້ວຍຊິວຫາວິນຍານທາດນັ້ນເປັນປັດໄຈ ແກ່ມະໂນທາດ ແລະສະພາວະທຳທີ່ສຳປະຍຸດດ້ວຍມະໂນທາດນັ້ນໂດຍສະມະນັນຕະຣະປັດໄຈ

ມະໂນທາດ ແລະສະພາວະທຳທີ່ສຳປະຍຸດດ້ວຍມະໂນທາດນັ້ນເປັນປັດໄຈແກ່ມະໂນວິນຍານທາດ ແລະສະພາວະທຳທີ່ສຳປະຍຸດດ້ວຍມະໂນວິນຍານທາດນັ້ນໂດຍສະມະນັນຕະຣະປັດໄຈ

ກາຍວິນຍານທາດ ແລະສະພາວະທຳທີ່ສຳປະຍຸດດ້ວຍກາຍວິນຍານທາດນັ້ນເປັນປັດໄຈແກ່ມະໂນທາດ ແລະສະພາວະທຳທີ່ສຳປະຍຸດດ້ວຍມະໂນທາດນັ້ນໂດຍສະມະນັນຕະຣະປັດໄຈ

ມະໂນທາດ ແລະສະພາວະທຳທີ່ສຳປະຍຸດດ້ວຍມະໂນທາດນັ້ນເປັນປັດໄຈ ແກ່ມະໂນວິນຍານທາດ ແລະສະພາວະທຳທີ່ສຳປະຍຸດດ້ວຍມະໂນວິນຍານທາດນັ້ນໂດຍສະມະນັນຕະຣະປັດໄຈ

ສະພາວະທຳທີ່ເປັນກຸສົນເຊິ່ງເກີດກ່ອນ ໆ ເປັນປັດໄຈແກ່ສະພາວະທຳທີ່ເປັນກຸສົນເຊິ່ງເກີດຫຼັງ ໆ ໂດຍສະມະນັນຕະຣະປັດໄຈ

ສະພາວະທຳທີ່ເປັນກຸສົນເຊິ່ງເກີດກ່ອນ ໆ ເປັນປັດໄຈແກ່ສະພາວະທຳທີ່ເປັນອັບພະຍາກະຕະ ເຊິ່ງເກີດຫຼັງ ໆ ໂດຍສະມະນັນຕະຣະປັດໄຈ

ສະພາວະທຳທີ່ເປັນອະກຸສົນເຊິ່ງເກີດກ່ອນ ໆ ເປັນປັດໄຈແກ່ສະພາວະທຳທີ່ເປັນອະກຸສົນເຊິ່ງເກີດຫຼັງ ໆ ໂດຍສະມະນັນຕະຣະປັດໄຈ

ສະພາວະທຳທີ່ເປັນອະກຸສົນເຊິ່ງເກີດກ່ອນ ໆ ເປັນປັດໄຈແກ່ສະພາວະທຳທີ່ເປັນອັບພະຍາກະຕະ ເຊິ່ງເກີດຫຼັງ ໆ ໂດຍສະມະນັນຕະຣະປັດໄຈ

ສະພາວະທຳທີ່ເປັນອັບພະຍາກະຕະເຊິ່ງເກີດກ່ອນ ໆ ເປັນປັດໄຈແກ່ສະພາວະທຳທີ່ເປັນອັບພະຍາກະຕະ ເຊິ່ງເກີດຫຼັງ ໆ ໂດຍສະມະນັນຕະຣະປັດໄຈ

ສະພາວະທຳທີ່ເປັນອັບພະຍາກະຕະເຊິ່ງເກີດກ່ອນ ໆ ເປັນປັດໄຈແກ່ສະພາວະທຳທີ່ເປັນກຸສົນເຊິ່ງເກີດຫຼັງ ໆ ໂດຍສະມະນັນຕະຣະປັດໄຈ

ສະພາວະທຳທີ່ເປັນອັບພະຍາກະຕະເຊິ່ງເກີດກ່ອນ ໆ ເປັນປັດໄຈແກ່ສະພາວະທຳທີ່ເປັນອະກຸສົນເຊິ່ງເກີດຫຼັງ ໆ ໂດຍສະມະນັນຕະຣະປັດໄຈ

ສະພາວະທຳທີ່ເປັນຈິດ ແລະເຈຕະສິກໃດ ໆ ເກີດຂຶ້ນໃນລຳດັບແຫ່ງສະພາວະທຳໃດ ໆ ສະພາວະທຳນັ້ນ ໆ ເປັນປັດໄຈແກ່ສະພາວະທຳທີ່ເປັນຈິດແລະເຈຕະສິກນັ້ນ ໆ ໂດຍສະມະນັນຕະຣະປັດໄຈ

[໖] ສະຫະຊາຕະປັດໄຈ ໄດ້ແກ່ ຂັນ ໔ ທີ່ບໍ່ເປັນຮູບເປັນປັດໄຈແກ່ກັນແລະກັນ ໂດຍສະຫະຊາຕະປັດໄຈ ມະຫາພູຕະຮູບ ໔ ເປັນປັດໄຈແກ່ກັນແລະກັນໂດຍສະຫະຊາຕະປັດໄຈໃນປະຕິສົນທິຂະນະນາມຮູບ ເປັນປັດໄຈແກ່ກັນແລະກັນໂດຍສະຫະຊາຕະປັດໄຈ

ສະພາວະທຳທີ່ເປັນຈິດ ແລະເຈຕະສິກເປັນປັດໄຈ ແກ່ຈິດຕະສະມຸດຖານຮູບໂດຍສະຫະຊາຕະປັດໄຈ ມະຫາພູຕະຮູບເປັນປັດໄຈແກ່ອຸປາທາຍະຮູບໂດຍສະຫະຊາຕະປັດໄຈ ສະພາວະທຳທີ່ເປັນຮູບ ບາງເວລາເປັນປັດໄຈແກ່ສະພາວະທຳທີ່ບໍ່ເປັນຮູບໂດຍສະຫະຊາຕະປັດໄຈ ບາງເວລາ ບໍ່ເປັນປັດໄຈໂດຍສະຫະຊາຕະປັດໄຈ

[໗] ອັນຍະມັນຍະປັດໄຈ ໄດ້ແກ່ ຂັນ ໔ ທີ່ບໍ່ເປັນຮູບເປັນປັດໄຈໂດຍອັນຍະມັນຍະປັດໄຈ ມະຫາພູຕະຮູບ ໔ ເປັນປັດໄຈໂດຍອັນຍະມັນຍະປັດໄຈ ໃນປະຕິສົນທິຂະນະ ນາມຮູບເປັນປັດໄຈໂດຍອັນຍະມັນຍະປັດໄຈ

[໘] ນິດສະຍະປັດໄຈ ໄດ້ແກ່ ຂັນ ໔ ທີ່ບໍ່ເປັນຮູບເປັນປັດໄຈແກ່ກັນ ແລະກັນໂດຍນິດສະຍະປັດໄຈ ມະຫາພູຕະຮູບ ໔ ເປັນປັດໄຈແກ່ກັນແລະກັນໂດຍນິດສະຍະປັດໄຈ ໃນປະຕິສົນທິຂະນະ ນາມຮູບເປັນປັດໄຈແກ່ກັນ ແລະກັນໂດຍນິດສະຍະປັດໄຈ

ສະພາວະທຳທີ່ເປັນຈິດ ແລະເຈຕະສິກເປັນປັດໄຈແກ່ຈິດຕະສະມຸດຖານຮູບໂດຍນິດສະຍະປັດໄຈ ມະຫາພູຕະຮູບ ເປັນປັດໄຈແກ່ອຸປາທາຍະຮູບໂດຍນິດສະຍະປັດໄຈ

ຈັກຂາຍະຕະນະເປັນປັດໄຈແກ່ຈັກຂຸວິນຍານທາດ ແລະສະພາວະທຳທີ່ສຳປະຍຸດດ້ວຍຈັກຂຸວິນຍານທາດນັ້ນໂດຍນິດສະຍະປັດໄຈ

ໂສຕາຍະຕະນະເປັນປັດໄຈແກ່ໂສຕະວິນຍານທາດ ແລະສະພາວະທຳທີ່ສຳປະຍຸດດ້ວຍໂສຕະວິນຍານທາດນັ້ນໂດຍນິດສະຍະປັດໄຈ

ຄານາຍະຕະນະເປັນປັດໄຈແກ່ຄານະວິນຍານທາດ ແລະສະພາວະທຳທີ່ສຳປະຍຸດດ້ວຍຄານະວິນຍານທາດນັ້ນໂດຍນິດສະຍະປັດໄຈ

ຊິວຫາຍະຕະນະເປັນປັດໄຈແກ່ຊິວຫາວິນຍານທາດ ແລະສະພາວະທຳທີ່ສຳປະຍຸດດ້ວຍຊິວຫາວິນຍານທາດນັ້ນໂດຍນິດສະຍະປັດໄຈ

ກາຍາຍະຕະນະເປັນປັດໄຈແກ່ກາຍວິນຍານທາດ ແລະສະພາວະທຳທີ່ສຳປະຍຸດດ້ວຍກາຍວິນຍານທາດນັ້ນໂດຍນິດສະຍະປັດໄຈ

ຮູບທີ່ມະໂນທາດແລະມະໂນວິນຍານທາດອາໄສເປັນໄປເປັນປັດໄຈແກ່ມະໂນທາດ ມະໂນວິນຍານທາດ ແລະສະພາວະທຳທີ່ສຳປະຍຸດດ້ວຍທາດທັງ ໒ ນັ້ນໂດຍນິດສະຍະປັດໄຈ

[໙] ອຸປະນິດສະຍະປັດໄຈ ໄດ້ແກ່ ສະພາວະທຳທີ່ເປັນກຸສົນເຊິ່ງເກີດກ່ອນ ໆ ເປັນປັດໄຈແກ່ສະພາວະທຳທີ່ເປັນກຸສົນເຊິ່ງເກີດຫຼັງ ໆ ໂດຍອຸປະນິດສະຍະປັດໄຈ

ສະພາວະທຳທີ່ເປັນກຸສົນເຊິ່ງເກີດກ່ອນ ໆ ເປັນປັດໄຈແກ່ສະພາວະທຳທີ່ເປັນອະກຸສົນບາງເຫຼົ່າເຊິ່ງເກີດຫຼັງ ໆ ໂດຍອຸປະນິດສະຍະປັດໄຈ

ສະພາວະທຳທີ່ເປັນກຸສົນເຊິ່ງເກີດກ່ອນ ໆ ເປັນປັດໄຈແກ່ສະພາວະທຳທີ່ເປັນອັບພະຍາກະຕະ ເຊິ່ງເກີດຫຼັງ ໆ ໂດຍອຸປະນິດສະຍະປັດໄຈ

ສະພາວະທຳທີ່ເປັນອະກຸສົນເຊິ່ງເກີດກ່ອນ ໆ ເປັນປັດໄຈແກ່ສະພາວະທຳທີ່ເປັນອະກຸສົນເຊິ່ງເກີດຫຼັງ ໆ ໂດຍອຸປະນິດສະຍະປັດໄຈ

ສະພາວະທຳທີ່ເປັນອະກຸສົນເຊິ່ງເກີດກ່ອນ ໆ ເປັນປັດໄຈແກ່ສະພາວະທຳທີ່ເປັນກຸສົນບາງເຫຼົ່າເຊິ່ງເກີດຫຼັງ ໆ ໂດຍອຸປະນິດສະຍະປັດໄຈ

ສະພາວະທຳທີ່ເປັນອະກຸສົນເຊິ່ງເກີດກ່ອນ ໆ ເປັນປັດໄຈແກ່ສະພາວະທຳທີ່ເປັນອັບພະຍາກະຕະເຊິ່ງເກີດຫຼັງ ໆ ໂດຍອຸປະນິດສະຍະປັດໄຈ

ສະພາວະທຳທີ່ເປັນອັບພະຍາກະຕະເຊິ່ງເກີດກ່ອນ ໆ ເປັນປັດໄຈແກ່ສະພາວະທຳທີ່ເປັນອັບພະຍາກະຕະເຊິ່ງເກີດຫຼັງ ໆ ໂດຍອຸປະນິດສະຍະປັດໄຈ

ສະພາວະທຳທີ່ເປັນອັບພະຍາກະຕະເຊິ່ງເກີດກ່ອນ ໆ ເປັນປັດໄຈແກ່ສະພາວະທຳທີ່ເປັນກຸສົນເຊິ່ງເກີດຫຼັງ ໆ ໂດຍອຸປະນິດສະຍະປັດໄຈ

ສະພາວະທຳທີ່ເປັນອັບພະຍາກະຕະເຊິ່ງເກີດກ່ອນ ໆ ເປັນປັດໄຈແກ່ສະພາວະທຳທີ່ເປັນອະກຸສົນເຊິ່ງເກີດຫຼັງ ໆ ໂດຍອຸປະນິດສະຍະປັດໄຈ

ແມ່ນອຸຕຸແລະໂພຊະນະກໍເປັນປັດໄຈໂດຍອຸປະນິດສະຍະປັດໄຈ ແມ່ນບຸກຄົນກໍເປັນປັດໄຈໂດຍອຸປະນິດສະຍະປັດໄຈ ແມ່ນເສນາສະນະກໍເປັນປັດໄຈໂດຍອຸປະນິດສະຍະປັດໄຈ

[໑໐] ປຸເຣຊາຕະປັດໄຈ ໄດ້ແກ່ ຈັກຂາຍະຕະນະເປັນປັດໄຈແກ່ຈັກຂຸວິນຍານທາດແລະສະພາວະທຳທີ່ສຳປະຍຸດດ້ວຍຈັກຂຸວິນຍານທາດນັ້ນໂດຍປຸເຣຊາຕະປັດໄຈ

ໂສຕາຍະຕະນະເປັນປັດໄຈແກ່ໂສຕະວິນຍານທາດ ແລະສະພາວະທຳທີ່ສຳປະຍຸດດ້ວຍໂສຕະວິນຍານທາດນັ້ນໂດຍປຸເຣຊາຕະປັດໄຈ

ຄານາຍະຕະນະເປັນປັດໄຈແກ່ຄານະວິນຍານທາດ ແລະສະພາວະທຳທີ່ສຳປະຍຸດດ້ວຍຄານະວິນຍານທາດນັ້ນໂດຍປຸເຣຊາຕະປັດໄຈ

ຊິວຫາຍະຕະນະເປັນປັດໄຈແກ່ຊິວຫາວິນຍານທາດ ແລະສະພາວະທຳທີ່ສຳປະຍຸດດ້ວຍຊິວຫາວິນຍານທາດນັ້ນໂດຍປຸເຣຊາຕະປັດໄຈ

ກາຍາຍະຕະນະເປັນປັດໄຈແກ່ກາຍວິນຍານທາດ ແລະສະພາວະທຳທີ່ສຳປະຍຸດດ້ວຍກາຍວິນຍານທາດນັ້ນໂດຍປຸເຣຊາຕະປັດໄຈ

ຣູປາຍະຕະນະເປັນປັດໄຈແກ່ຈັກຂຸວິນຍານທາດ ແລະສະພາວະທຳທີ່ສຳປະຍຸດດ້ວຍຈັກຂຸວິນຍານທາດນັ້ນໂດຍປຸເຣຊາຕະປັດໄຈ

ສັດທາຍະຕະນະ ເປັນປັດໄຈແກ່ໂສຕະວິນຍານທາດແລະສະພາວະທຳທີ່ສຳປະຍຸດດ້ວຍໂສຕະວິນຍານທາດນັ້ນໂດຍປຸເຣຊາຕະປັດໄຈ

ຄັນທາຍະຕະນະເປັນປັດໄຈແກ່ຄານະວິນຍານທາດແລະສະພາວະທຳທີ່ສຳປະຍຸດດ້ວຍຄານະວິນຍານທາດນັ້ນໂດຍປຸເຣຊາຕະປັດໄຈ

ຣະສາຍະຕະນະເປັນປັດໄຈແກ່ຊິວຫາວິນຍານທາດ ແລະສະພາວະທຳທີ່ສຳປະຍຸດດ້ວຍຊິວຫາວິນຍານທາດນັ້ນໂດຍປຸເຣຊາຕະປັດໄຈ

ໂຜດຖັບພາຍະຕະນະ ເປັນປັດໄຈແກ່ກາຍວິນຍານທາດແລະສະພາວະທຳທີ່ສຳປະຍຸດດ້ວຍກາຍວິນຍານທາດນັ້ນໂດຍປຸເຣຊາຕະປັດໄຈ

ຣູປາຍະຕະນະ ສັດທາຍະຕະນະ ຄັນທາຍະຕະນະ ຣະສາຍະຕະນະ ແລະໂຜດຖັບພາຍະຕະນະເປັນປັດໄຈແກ່ມະໂນທາດ ແລະສະພາວະທຳທີ່ສຳປະຍຸດດ້ວຍມະໂນທາດນັ້ນໂດຍປຸເຣຊາຕະປັດໄຈ

ຣູບທີ່ມະໂນທາດແລະມະໂນວິນຍານທາດອາໄສເປັນໄປເປັນປັດໄຈແກ່ມະໂນທາດ ແລະສະພາວະທຳທີ່ສຳປະຍຸດດ້ວຍມະໂນທາດນັ້ນໂດຍປຸເຣຊາຕະປັດໄຈ ບາງເວລາເປັນປັດໄຈແກ່ມະໂນວິນຍານທາດ ແລະສະພາວະທຳທີ່ສຳປະຍຸດດ້ວຍມະໂນວິນຍານທາດນັ້ນໂດຍປຸເຣຊາຕະປັດໄຈ ບາງເວລາບໍ່ເປັນປັດໄຈໂດຍປຸເຣຊາຕະປັດໄຈ

[໑໑] ປັດສາຊາຕະປັດໄຈ ໄດ້ແກ່ ສະພາວະທຳທີ່ເປັນຈິດແລະເຈຕະສິກເຊິ່ງເກີດພາຍຫຼັງ ເປັນປັດໄຈແກ່ກາຍນີ້ເຊິ່ງເກີດກ່ອນໂດຍປັດສາຊາຕະປັດໄຈ

[໑໔] ອາເສວະນະປັດໄຈ ໄດ້ແກ່ ສະພາວະທຳທີ່ເປັນກຸສົນເຊິ່ງເກີດກ່ອນ ໆ ເປັນປັດໄຈແກ່ສະພາວະທຳທີ່ເປັນກຸສົນເຊິ່ງເກີດຫຼັງ ໆ ໂດຍອາເສວະນະປັດໄຈ

ສະພາວະທຳທີ່ເປັນອະກຸສົນເຊິ່ງເກີດກ່ອນ ໆ ເປັນປັດໄຈແກ່ສະພາວະທຳທີ່ເປັນອະກຸສົນເຊິ່ງເກີດຫຼັງ ໆ ໂດຍອາເສວະນະປັດໄຈ

ສະພາວະທຳທີ່ເປັນອັບພະຍາກະຕະກິຣິຍາເຊິ່ງເກີດກ່ອນ ໆ ເປັນປັດໄຈແກ່ສະພາວະທຳທີ່ເປັນອັບພະຍາກະຕະກິຣິຍາເຊິ່ງເກີດຫຼັງ ໆ ໂດຍອາເສວະນະປັດໄຈ

[໑໓] ກຳມະປັດໄຈ ໄດ້ແກ່ ກຳທີ່ເປັນກຸສົນແລະອະກຸສົນເປັນປັດໄຈແກ່ຂັນທີ່ເປັນວິບາກ ແລະກະຕັດຕາຮູບໂດຍກຳມະປັດໄຈ

ເຈດຕະນາ ເປັນປັດໄຈແກ່ສະພາວະທຳທີ່ສຳປະຍຸດ ແລະຮູບມີສະພາວະທຳນັ້ນເປັນສະມຸດຖານ ໂດຍກຳມະປັດໄຈ

[໑໔] ວິປາກະປັດໄຈ ໄດ້ແກ່ ຂັນ ໔ ທີ່ເປັນວິບາກ ເຊິ່ງບໍ່ເປັນຮູບ ເປັນປັດໄຈແກ່ ກັນແລະກັນໂດຍວິປາກະປັດໄຈ

[໑໕] ອາຫາຣະປັດໄຈ ໄດ້ແກ່ ກະວະລິງກາຣາຫານເປັນປັດໄຈແກ່ກາຍນີ້ໂດຍອາຫານປັດໄຈ ອາຫານທີ່ບໍ່ເປັນຮູບເປັນປັດໄຈແກ່ສະພາວະທຳທີ່ສຳປະຍຸດ ແລະຮູບເຊິ່ງມີສະພາວະທຳນັ້ນເປັນສະມຸດຖານໂດຍອາຫາຣະປັດໄຈ

[໑໖] ອິນຊີຍະປັດໄຈ ໄດ້ແກ່ ຈັກຂຸນຊີເປັນປັດໄຈແກ່ຈັກຂຸວິນຍານທາດ ແລະສະພາວະທຳທີ່ສຳປະຍຸດດ້ວຍຈັກຂຸວິນຍານທາດນັ້ນໂດຍອິນຊີຍະປັດໄຈ

ໂສຕິນຊີເປັນປັດໄຈແກ່ໂສຕະວິນຍານທາດ ແລະສະພາວະທຳທີ່ສຳປະຍຸດດ້ວຍໂສຕະວິນຍານທາດນັ້ນໂດຍອິນຊີຍະປັດໄຈ

ຄານິນຊີ ເປັນປັດໄຈແກ່ຄານະວິນຍານທາດ ແລະສະພາວະທຳທີ່ສຳປະຍຸດດ້ວຍຄານະວິນຍານທາດນັ້ນໂດຍອິນຊີຍະປັດໄຈ

ຊິວຫິນຊີເປັນປັດໄຈແກ່ຊິວຫາວິນຍານທາດ ແລະສະພາວະທຳທີ່ສຳປະຍຸດດ້ວຍຊິວຫາວິນຍານທາດນັ້ນໂດຍອິນຊີຍະປັດໄຈ

ກາຍິນຊີເປັນປັດໄຈແກ່ກາຍວິນຍານທາດ ແລະສະພາວະທຳທີ່ສຳປະຍຸດດ້ວຍກາຍວິນຍານທາດນັ້ນໂດຍອິນຊີຍະປັດໄຈ ຮູບຊີວິຕິນຊີເປັນປັດໄຈແກ່ກະຕັດຕາຮູບໂດຍອິນຊີຍະປັດໄຈ

ອິນຊີທີ່ບໍ່ເປັນຮູບເປັນປັດໄຈແກ່ສະພາວະທຳທີ່ສຳປະຍຸດ ແລະຮູບເຊິ່ງມີສະພາວະທຳນັ້ນເປັນສະມຸດຖານໂດຍອິນຊີຍະປັດໄຈ

[໑໗] ຊານະປັດໄຈ ໄດ້ແກ່ ອົງຊານເປັນປັດໄຈແກ່ສະພາວະທຳທີ່ສຳປະຍຸດດ້ວຍຊານ ແລະຮູບເຊິ່ງມີສະພາວະທຳນັ້ນເປັນສະມຸດຖານໂດຍຊານະປັດໄຈ

[໑໙] ມັກຄະປັດໄຈ ໄດ້ແກ່ ອົງມັກເປັນປັດໄຈແກ່ສະພາວະທໍາທີ່ສໍາປະຍຸດດ້ວຍມັກແລະຮູບເຊິ່ງມີສະພາວະທໍານັ້ນເປັນສະມຸດຖານໂດຍມັກຄະປັດໄຈ

[໑໙] ສໍາປະຍຸດຕະປັດໄຈ ໄດ້ແກ່ ຂັນ ໔ ທີ່ບໍ່ເປັນຮູບເປັນປັດໄຈແກ່ກັນແລະກັນ ໂດຍສໍາປະຍຸດຕະປັດໄຈ

[໔໐] ວິບປະຍຸດຕະປັດໄຈ ໄດ້ແກ່ ສະພາວະທໍາທີ່ເປັນຮູບເປັນປັດໄຈແກ່ສະພາວະທໍາທີ່ບໍ່ເປັນຮູບໂດຍວິບປະຍຸດຕະປັດໄຈ

ສະພາວະທໍາທີ່ບໍ່ເປັນຮູບ ເປັນປັດໄຈແກ່ສະພາວະທໍາທີ່ເປັນຮູບໂດຍວິບປະຍຸດຕະປັດໄຈ

[໔໑] ອັດຖິປັດໄຈ ໄດ້ແກ່ ຂັນ ໔ ທີ່ບໍ່ເປັນຮູບເປັນປັດໄຈແກ່ກັນ ແລະກັນໂດຍອັດຖິປັດໄຈ

ມະຫາພູຕະຮູບ ໔ ເປັນປັດໄຈແກ່ກັນແລະກັນໂດຍອັດຖິປັດໄຈ ໃນປະຕິສົນທິຂະນະນາມຮູບ ເປັນປັດໄຈແກ່ກັນ ແລະກັນໂດຍອັດຖິປັດໄຈ ສະພາວະທໍາທີ່ເປັນຈິດແລະເຈຕະສິກເປັນປັດໄຈແກ່ຈິດຕະສະມຸດຖານຮູບໂດຍອັດຖິປັດໄຈ ມະຫາພູຕະຮູບເປັນປັດໄຈແກ່ອຸປາທາຍະຮູບໂດຍອັດຖິປັດໄຈ

ຈັກຂາຍະຕະນະເປັນປັດໄຈແກ່ຈັກຂຸວິນຍານທາດ ແລະສະພາວະທໍາທີ່ສໍາປະຍຸດດ້ວຍຈັກຂຸວິນຍານທາດນັ້ນໂດຍອັດຖິປັດໄຈ

ໂສຕາຍະຕະນະ ເປັນປັດໄຈແກ່ໂສຕະວິນຍານທາດ ແລະສະພາວະທໍາທີ່ສໍາປະຍຸດດ້ວຍໂສຕະວິນຍານທາດນັ້ນໂດຍອັດຖິປັດໄຈ

ຄານາຍະຕະນະ ເປັນປັດໄຈແກ່ຄານະວິນຍານທາດແລະສະພາວະທໍາທີ່ສໍາປະຍຸດດ້ວຍຄານະວິນຍານທາດນັ້ນໂດຍອັດຖິປັດໄຈ

ຊິວຫາຍະຕະນະ ເປັນປັດໄຈແກ່ຊິວຫາວິນຍານທາດ ແລະສະພາວະທໍາທີ່ສໍາປະຍຸດດ້ວຍຊິວຫາວິນຍານທາດນັ້ນໂດຍອັດຖິປັດໄຈ

ກາຍາຍະຕະນະ ເປັນປັດໄຈແກ່ກາຍວິນຍານທາດແລະສະພາວະທໍາທີ່ສໍາປະຍຸດດ້ວຍກາຍວິນຍານທາດນັ້ນໂດຍອັດຖິປັດໄຈ

ຮູປາຍະຕະນະ ເປັນປັດໄຈແກ່ຈັກຂຸວິນຍານທາດ ແລະສະພາວະທໍາທີ່ສໍາປະຍຸດດ້ວຍຈັກຂຸວິນຍານທາດນັ້ນໂດຍອັດຖິປັດໄຈ

ສັດທາຍະຕະນະ ເປັນປັດໄຈແກ່ໂສຕະວິນຍານທາດ ແລະສະພາວະທໍາທີ່ສໍາປະຍຸດດ້ວຍໂສຕະວິນຍານທາດນັ້ນໂດຍອັດຖິປັດໄຈ

ຄັນທາຍະຕະນະ ເປັນປັດໄຈແກ່ຄານະວິນຍານທາດ ແລະສະພາວະທໍາທີ່ສໍາປະຍຸດດ້ວຍຄານະວິນຍານທາດນັ້ນໂດຍອັດຖິປັດໄຈ

ຣະສາຍະຕະນະ ເປັນປັດໄຈແກ່ຊິວຫາວິນຍານທາດ ແລະສະພາວະທຳທີ່ສຳປະຍຸດດ້ວຍຊິວຫາວິນຍານທາດນັ້ນໂດຍອັດຖິປັດໄຈ

ໂຜດຖັບພາຍະຕະນະເປັນປັດໄຈແກ່ກາຍວິນຍານທາດ ແລະສະພາວະທຳທີ່ສຳປະຍຸດດ້ວຍກາຍວິນຍານທາດນັ້ນໂດຍອັດຖິປັດໄຈ

ຣູປາຍະຕະນະ ສັດທາຍະຕະນະ ຄັນທາຍະຕະນະ ຣະສາຍະຕະນະ ແລະໂຜດຖັບພາຍະຕະນະເປັນປັດໄຈ ແກ່ມະໂນທາດແລະສະພາວະທຳທີ່ສຳປະຍຸດດ້ວຍມະໂນທາດນັ້ນໂດຍອັດຖິປັດໄຈ

ຣູບທີ່ມະໂນທາດ ແລະມະໂນວິນຍານທາດອາໄສເປັນໄປ ເປັນປັດໄຈແກ່ມະໂນທາດມະໂນວິນຍານທາດ ແລະສະພາວະທຳທີ່ສຳປະຍຸດດ້ວຍທາດທັງ ໒ ນັ້ນໂດຍອັດຖິປັດໄຈ

[໒໒] ນັດຖິປັດໄຈ ໄດ້ແກ່ ສະພາວະທຳທີ່ເປັນຈິດແລະເຈຕະສິກທີ່ດັບໄປບໍ່ມີລະຫວ່າງຄັ່ນດ້ວຍດີເປັນປັດໄຈ ແກ່ສະພາວະທຳທີ່ເປັນຈິດແລະເຈຕະສິກທີ່ເປັນປັດຈຸບັນໂດຍນັດຖິປັດໄຈ

[໒໓] ວິຄະຕະປັດໄຈ ໄດ້ແກ່ ສະພາວະທຳທີ່ເປັນຈິດແລະເຈຕະສິກທີ່ປາດສະຈາກໄປບໍ່ມີລະຫວ່າງຄັ່ນດ້ວຍດີ ເປັນປັດໄຈແກ່ສະພາວະທຳທີ່ເປັນຈິດ ແລະເຈຕະສິກທີ່ເປັນປັດຈຸບັນໂດຍວິຄະຕະປັດໄຈ

[໒໔] ອະວິຄະຕະປັດໄຈ ໄດ້ແກ່ ຂັນ ໔ ທີ່ບໍ່ເປັນຣູບ ເປັນປັດໄຈແກ່ກັນແລະກັນໂດຍອະວິຄະຕະປັດໄຈ

ມະຫາພູຕະຣູບ ໔ ເປັນປັດໄຈແກ່ກັນແລະກັນໂດຍອະວິຄະຕະປັດໄຈ ໃນປະຕິສົນທິຂະນະນາມຣູບ ເປັນປັດໄຈແກ່ກັນແລະກັນໂດຍອະວິຄະຕະປັດໄຈ ສະພາວະທຳທີ່ເປັນຈິດແລະເຈຕະສິກ ເປັນປັດໄຈແກ່ຈິດຕະສະມຸດຖານຣູບໂດຍອະວິຄະຕະປັດໄຈ ມະຫາພູຕະຣູບ ເປັນປັດໄຈແກ່ອຸປາທາຍະຣູບໂດຍອະວິຄະຕະປັດໄຈ

ຈັກຂາຍະຕະນະ ເປັນປັດໄຈແກ່ຈັກຂຸວິນຍານທາດ ແລະສະພາວະທຳທີ່ສຳປະຍຸດດ້ວຍຈັກຂຸວິນຍານທາດນັ້ນໂດຍອະວິຄະຕະປັດໄຈ

ໂສຕາຍະຕະນະ ເປັນປັດໄຈແກ່ໂສຕະວິນຍານທາດ ແລະສະພາວະທຳທີ່ສຳປະຍຸດດ້ວຍໂສຕະວິນຍານທາດນັ້ນໂດຍອະວິຄະຕະປັດໄຈ

ຄານາຍະຕະນະ ເປັນປັດໄຈແກ່ຄານະວິນຍານທາດແລະສະພາວະທຳທີ່ສຳປະຍຸດດ້ວຍຄານະວິນຍານທາດນັ້ນໂດຍອະວິຄະຕະປັດໄຈ

ຊິວຫາຍະຕະນະ ເປັນປັດໄຈແກ່ຊິວຫາວິນຍານທາດ ແລະສະພາວະທຳທີ່ສຳປະຍຸດດ້ວຍຊິວຫາວິນຍານທາດນັ້ນໂດຍອະວິຄະຕະປັດໄຈ

ກາຍາຍະຕະນະ ເປັນປັດໄຈແກ່ກາຍວິນຍານທາດ ແລະສະພາວະທຳທີ່ສຳປະຍຸດດ້ວຍກາຍວິນຍານທາດນັ້ນໂດຍອະວິຄະຕະປັດໄຈ

ຣູປາຍະຕະນະ ເປັນປັດໄຈແກ່ຈັກຂຸວິນຍານທາດ ແລະສະພາວະທຳທີ່ສຳປະຍຸດດ້ວຍຈັກຂຸວິນຍານທາດນັ້ນໂດຍອະວິຄະຕະປັດໄຈ

ສັດທາຍະຕະນະ ເປັນປັດໄຈແກ່ໂສຕະວິນຍານທາດແລະສະພາວະທຳທີ່ສຳປະຍຸດດ້ວຍໂສຕະວິນຍານທາດນັ້ນໂດຍອະວິຄະຕະປັດໄຈ

ຄັນທາຍະຕະນະ ເປັນປັດໄຈແກ່ຄານະວິນຍານທາດແລະສະພາວະທຳທີ່ສຳປະຍຸດດ້ວຍຄານະວິນຍານທາດນັ້ນໂດຍອະວິຄະຕະປັດໄຈ

ຣະສາຍະຕະນະ ເປັນປັດໄຈແກ່ຊິວຫາວິນຍານທາດແລະສະພາວະທຳທີ່ສຳປະຍຸດດ້ວຍຊິວຫາວິນຍານທາດນັ້ນໂດຍອະວິຄະຕະປັດໄຈ

ໂຜດຖັບພາຍະຕະນະ ເປັນປັດໄຈແກ່ກາຍວິນຍານທາດ ແລະສະພາວະທຳທີ່ສຳປະຍຸດດ້ວຍກາຍວິນຍານທາດນັ້ນໂດຍອະວິຄະຕະປັດໄຈ

ຣູປາຍະຕະນະ ສັດທາຍະຕະນະ ຄັນທາຍະຕະນະ ຣະສາຍະຕະນະ ແລະໂຜດຖັບພາຍະຕະນະ ເປັນປັດໄຈແກ່ມະໂນທາດແລະສະພາວະທຳທີ່ສຳປະຍຸດດ້ວຍມະໂນທາດນັ້ນໂດຍອະວິຄະຕະປັດໄຈ

ຮູບທີ່ມະໂນທາດແລະມະໂນວິນຍານທາດອາໄສເປັນໄປ ເປັນປັດໄຈແກ່ມະໂນທາດ

ມະໂນວິນຍານະທາດ ແລະສະພາວະທຳທີ່ສຳປະຍຸດດ້ວຍທາດທັງ ໒ ນັ້ນໂດຍອະວິຄະຕະປັດໄຈ

**ປັດຈະຍະນິດເທດ ຈົບ**

## ປຸດສາວາຣະ

## ໑. ປັດຈະຍານຸໂລມ

## ເອກະມູລະກະໄນ ໑. ກຸສະລະບົດ

[໔໕] ສະພາວະທຳທີ່ເປັນກຸສົນອາໄສສະພາວະທຳທີ່ເປັນກຸສົນ ເພິ່ງເກີດຂຶ້ນຍ້ອນເຫດປັດໄຈໄດ້ແດ່ບໍ?

ສະພາວະທຳທີ່ເປັນອະກຸສົນອາໄສສະພາວະທຳທີ່ເປັນກຸສົນເພິ່ງເກີດຂຶ້ນຍ້ອນເຫດປັດໄຈໄດ້ແດ່ບໍ?

ສະພາວະທຳທີ່ເປັນອັບພະຍາກະຕະອາໄສສະພາວະທຳທີ່ເປັນກຸສົນເພິ່ງເກີດຂຶ້ນຍ້ອນເຫດປັດໄຈ ໄດ້ແດ່ບໍ?

ສະພາວະທຳທີ່ເປັນກຸສົນ ແລະທີ່ເປັນອັບພະຍາກະຕະອາໄສສະພາວະທຳທີ່ເປັນກຸສົນເພິ່ງເກີດຂຶ້ນ ຍ້ອນເຫດປັດໄຈໄດ້ແດ່ບໍ?

ສະພາວະທຳທີ່ເປັນອະກຸສົນ ແລະທີ່ເປັນອັບພະຍາກະຕະອາໄສສະພາວະທຳທີ່ເປັນກຸສົນເພິ່ງເກີດຂຶ້ນຍ້ອນເຫດປັດໄຈໄດ້ແດ່ບໍ?

ສະພາວະທຳທີ່ເປັນກຸສົນ ແລະທີ່ເປັນອະກຸສົນອາໄສສະພາວະທຳທີ່ເປັນກຸສົນເພິ່ງເກີດຂຶ້ນຍ້ອນເຫດປັດໄຈໄດ້ແດ່ບໍ?

ສະພາວະທຳທີ່ເປັນກຸສົນທີ່ເປັນອະກຸສົນ ແລະທີ່ເປັນອັບພະຍາກະຕະອາໄສສະພາວະທຳທີ່ເປັນກຸສົນ ເພິ່ງເກີດຂຶ້ນຍ້ອນເຫດປັດໄຈໄດ້ແດ່ບໍ?

## ໔. ອະກຸສົນບົດ

[໔໖] ສະພາວະທຳທີ່ເປັນອະກຸສົນອາໄສສະພາວະທຳທີ່ເປັນອະກຸສົນເພິ່ງເກີດຂຶ້ນຍ້ອນເຫດປັດໄຈໄດ້ແດ່ບໍ?

ສະພາວະທຳທີ່ເປັນກຸສົນອາໄສສະພາວະທຳທີ່ເປັນອະກຸສົນເພິ່ງເກີດຂຶ້ນຍ້ອນເຫດປັດໄຈໄດ້ແດ່ບໍ?

ສະພາວະທຳທີ່ເປັນອັບພະຍາກະຕະອາໄສສະພາວະທຳທີ່ເປັນອະກຸສົນເພິ່ງເກີດຂຶ້ນຍ້ອນເຫດປັດໄຈໄດ້ແດ່ບໍ?

ສະພາວະທຳທີ່ເປັນກຸສົນ ແລະທີ່ເປັນອັບພະຍາກະຕະອາໄສສະພາວະທຳທີ່ເປັນອະກຸສົນເພິ່ງເກີດຂຶ້ນ ຍ້ອນເຫດປັດໄຈໄດ້ແດ່ບໍ?

ສະພາວະທຳທີ່ເປັນອະກຸສົນ ແລະທີ່ເປັນອັບພະຍາກະຕະອາໄສສະພາວະທຳທີ່ເປັນອະກຸສົນເພິ່ງເກີດຂຶ້ນຍ້ອນເຫດປັດໄຈໄດ້ແດ່ບໍ?

ສະພາວະທຳທີ່ເປັນກຸສົນ ແລະທີ່ເປັນອະກຸສົນອາໄສສະພາວະທຳທີ່ເປັນອະກຸສົນເພິ່ງເກີດຂຶ້ນຍ້ອນເຫດປັດໄຈໄດ້ແດ່ບໍ?

ສະພາວະທຳທີ່ເປັນກຸສົນທີ່ເປັນອະກຸສົນ ແລະທີ່ເປັນອັບພະຍາກະຕະອາໄສສະພາວະທຳທີ່ເປັນອະກຸສົນເພິ່ງເກີດຂຶ້ນຍ້ອນເຫດປັດໄຈໄດ້ແດ່ບໍ?

## ໖. ອັບພະຍາກະຕະບົດ

[໔໗] ສະພາວະທຳທີ່ເປັນອັບພະຍາກະຕະອາໄສສະພາວະທຳທີ່ເປັນອັບພະຍາກະຕະເພິ່ງເກີດຂຶ້ນ ຍ້ອນເຫດປັດໄຈໄດ້ແດ່ບໍ?

ສະພາວະທຳທີ່ເປັນກຸສົນອາໄສສະພາວະທຳທີ່ເປັນອັບພະຍາກະຕະ ເພິ່ງເກີດຂຶ້ນຍ້ອນເຫດປັດໄຈໄດ້ແດ່ບໍ?

ສະພາວະທຳທີ່ເປັນອະກຸສົນອາໄສສະພາວະທຳທີ່ເປັນອັບພະຍາກະຕະເພິ່ງເກີດຂຶ້ນຍ້ອນເຫດປັດໄຈໄດ້ແດ່ບໍ?

ສະພາວະທຳທີ່ເປັນກຸສົນ ແລະທີ່ເປັນອັບພະຍາກະຕະອາໄສສະພາວະທຳທີ່ເປັນອັບພະຍາກະຕະເພິ່ງເກີດຂຶ້ນຍ້ອນເຫດປັດໄຈໄດ້ແດ່ບໍ?

ສະພາວະທຳທີ່ເປັນອະກຸສົນ ແລະທີ່ເປັນອັບພະຍາກະຕະອາໄສສະພາວະທຳທີ່ເປັນອັບພະຍາກະຕະເພິ່ງເກີດຂຶ້ນຍ້ອນເຫດປັດໄຈໄດ້ແດ່ບໍ?

ສະພາວະທຳທີ່ເປັນກຸສົນ ແລະທີ່ເປັນອະກຸສົນອາໄສສະພາວະທຳທີ່ເປັນອັບພະຍາກະຕະເພິ່ງເກີດຂຶ້ນຍ້ອນເຫດປັດໄຈໄດ້ແດ່ບໍ?

ສະພາວະທຳທີ່ເປັນກຸສົນທີ່ເປັນອະກຸສົນ ແລະທີ່ເປັນອັບພະຍາກະຕະອາໄສສະພາວະທຳທີ່ເປັນອັບພະຍາກະຕະເພິ່ງເກີດຂຶ້ນຍ້ອນເຫດປັດໄຈໄດ້ແດ່ບໍ?

## ໔. ກຸສະລາພະຍາກະຕະບົດ

[໔໗] ສະພາວະທຳທີ່ເປັນກຸສົນອາໄສສະພາວະທຳທີ່ເປັນກຸສົນແລະທີ່ເປັນອັບພະຍາກະຕະ ເພິ່ງເກີດຂຶ້ນຍ້ອນເຫດປັດໄຈໄດ້ແດ່ບໍ?

ສະພາວະທຳທີ່ເປັນອະກຸສົນອາໄສສະພາວະທຳທີ່ເປັນກຸສົນ ແລະທີ່ເປັນອັບພະຍາກະຕະເພິ່ງເກີດຂຶ້ນຍ້ອນເຫດປັດໄຈໄດ້ແດ່ບໍ?

ສະພາວະທຳທີ່ເປັນອັບພະຍາກະຕະອາໄສສະພາວະທຳທີ່ເປັນກຸສົນ ແລະທີ່ເປັນອັບພະຍາກະຕະເພິ່ງເກີດຂຶ້ນຍ້ອນເຫດປັດໄຈໄດ້ແດ່ບໍ?

ສະພາວະທຳທີ່ເປັນກຸສົນແລະທີ່ເປັນອັບພະຍາກະຕະອາໄສສະພາວະທຳທີ່ເປັນກຸສົນແລະທີ່ເປັນອັບພະຍາກະຕະເພິ່ງເກີດຂຶ້ນຍ້ອນເຫດປັດໄຈໄດ້ແດ່ບໍ?

ສະພາວະທຳທີ່ເປັນອະກຸສົນແລະທີ່ເປັນອັບພະຍາກະຕະອາໄສສະພາວະທຳທີ່ເປັນກຸສົນແລະທີ່ເປັນອັບພະຍາກະຕະ ເພິ່ງເກີດຂຶ້ນຍ້ອນເຫດປັດໄຈໄດ້ແດ່ບໍ?

ສະພາວະທຳທີ່ເປັນກຸສົນແລະທີ່ເປັນອະກຸສົນອາໄສສະພາວະທຳທີ່ເປັນກຸສົນແລະທີ່ເປັນອັບພະຍາກະຕະເພິ່ງເກີດຂຶ້ນຍ້ອນເຫດປັດໄຈໄດ້ແດ່ບໍ?

ສະພາວະທຳທີ່ເປັນກຸສົນທີ່ເປັນອະກຸສົນແລະທີ່ເປັນອັບພະຍາກະຕະອາໄສສະພາວະທຳທີ່ເປັນກຸສົນແລະທີ່ເປັນອັບພະຍາກະຕະເພິ່ງເກີດຂຶ້ນຍ້ອນເຫດປັດໄຈໄດ້ແດ່ບໍ?

## ໕. ອະກຸສະລາພະຍາກະຕະບົດ

[໔໘] ສະພາວະທຳທີ່ເປັນກຸສົນອາໄສສະພາວະທຳທີ່ເປັນອະກຸສົນແລະທີ່ເປັນອັບພະຍາກະຕະ ເພິ່ງເກີດຂຶ້ນຍ້ອນເຫດປັດໄຈໄດ້ແດ່ບໍ?

ສະພາວະທຳທີ່ເປັນອະກຸສົນອາໄສສະພາວະທຳທີ່ເປັນອະກຸສົນແລະທີ່ເປັນອັບພະຍາກະຕະເພິ່ງເກີດຂຶ້ນຍ້ອນເຫດປັດໄຈໄດ້ແດ່ບໍ?

ສະພາວະທຳທີ່ເປັນອັບພະຍາກະຕະອາໄສສະພາວະທຳທີ່ເປັນອະກຸສົນແລະທີ່ເປັນອັບພະຍາກະຕະເພິ່ງເກີດຂຶ້ນຍ້ອນເຫດປັດໄຈໄດ້ແດ່ບໍ?

ສະພາວະທຳທີ່ເປັນກຸສົນ ແລະທີ່ເປັນອັບພະຍາກະຕະອາໄສສະພາວະທຳທີ່ເປັນອະກຸສົນແລະທີ່ເປັນອັບພະຍາກະຕະເພິ່ງເກີດຂຶ້ນຍ້ອນເຫດປັດໄຈໄດ້ແດ່ບໍ?

ສະພາວະທຳທີ່ເປັນອະກຸສົນ ແລະທີ່ເປັນອັບພະຍາກະຕະອາໄສສະພາວະທຳທີ່ເປັນອະກຸສົນແລະທີ່ເປັນອັບພະຍາກະຕະ ເພິ່ງເກີດຂຶ້ນຍ້ອນເຫດປັດໄຈໄດ້ແດ່ບໍ?

ສະພາວະທຳທີ່ເປັນກຸສົນ ແລະທີ່ເປັນອະກຸສົນອາໄສສະພາວະທຳທີ່ເປັນອະກຸສົນແລະທີ່ເປັນອັບພະຍາກະຕະເພິ່ງເກີດຂຶ້ນຍ້ອນເຫດປັດໄຈໄດ້ແດ່ບໍ?

ສະພາວະທຳທີ່ເປັນກຸສົນທີ່ເປັນອະກຸສົນ ແລະທີ່ເປັນອັບພະຍາກະຕະອາໄສສະພາວະທຳທີ່ເປັນອະກຸສົນແລະທີ່ເປັນອັບພະຍາກະຕະເພິ່ງເກີດຂຶ້ນຍ້ອນເຫດປັດໄຈໄດ້ແດ່ບໍ?

## ຜ. ກຸສະລາກຸສະລະບົດ

[໓໐] ສະພາວະທຳທີ່ເປັນກຸສົນອາໄສສະພາວະທຳທີ່ເປັນກຸສົນແລະທີ່ເປັນອະກຸສົນເພິ່ງເກີດຂຶ້ນຍ້ອນເຫດປັດໄຈໄດ້ແດ່ບໍ?

ສະພາວະທຳທີ່ເປັນອະກຸສົນອາໄສສະພາວະທຳທີ່ເປັນກຸສົນ ແລະທີ່ເປັນອະກຸສົນເພິ່ງເກີດຂຶ້ນຍ້ອນເຫດປັດໄຈໄດ້ແດ່ບໍ?

ສະພາວະທຳທີ່ເປັນອັບພະຍາກະຕະອາໄສສະພາວະທຳທີ່ເປັນກຸສົນ ແລະທີ່ເປັນອະກຸສົນເພິ່ງເກີດຂຶ້ນຍ້ອນເຫດປັດໄຈໄດ້ແດ່ບໍ?

ສະພາວະທຳທີ່ເປັນກຸສົນ ແລະທີ່ເປັນອັບພະຍາກະຕະອາໄສສະພາວະທຳທີ່ເປັນກຸສົນແລະທີ່ເປັນອະກຸສົນເພິ່ງເກີດຂຶ້ນຍ້ອນເຫດປັດໄຈໄດ້ແດ່ບໍ?

ສະພາວະທຳທີ່ເປັນອະກຸສົນ ແລະທີ່ເປັນອັບພະຍາກະຕະອາໄສສະພາວະທຳທີ່ເປັນກຸສົນແລະທີ່ເປັນອະກຸສົນເພິ່ງເກີດຂຶ້ນຍ້ອນເຫດປັດໄຈໄດ້ແດ່ບໍ?

ສະພາວະທຳທີ່ເປັນກຸສົນ ແລະທີ່ເປັນອະກຸສົນອາໄສສະພາວະທຳທີ່ເປັນກຸສົນແລະທີ່ເປັນອະກຸສົນເພິ່ງເກີດຂຶ້ນຍ້ອນເຫດປັດໄຈໄດ້ແດ່ບໍ?

ສະພາວະທຳທີ່ເປັນກຸສົນທີ່ເປັນອະກຸສົນ ແລະທີ່ເປັນອັບພະຍາກະຕະອາໄສສະພາວະທຳທີ່ເປັນກຸສົນແລະທີ່ເປັນອະກຸສົນເພິ່ງເກີດຂຶ້ນຍ້ອນເຫດປັດໄຈໄດ້ແດ່ບໍ?

## ກ. ກຸສະລາກຸສະລາພະຍາກະຕະບົດ

[໓໑] ສະພາວະທຳທີ່ເປັນກຸສົນອາໄສສະພາວະທຳທີ່ເປັນກຸສົນ ທີ່ເປັນອະກຸສົນ ແລະ ທີ່ເປັນອັບພະຍາກະຕະເພິ່ງເກີດຂຶ້ນຍ້ອນເຫດປັດໄຈໄດ້ແດ່ບໍ?

ສະພາວະທຳທີ່ເປັນອະກຸສົນອາໄສສະພາວະທຳທີ່ເປັນກຸສົນ ທີ່ເປັນອະກຸສົນ ແລະທີ່ເປັນອັບພະຍາກະຕະເພິ່ງເກີດຂຶ້ນຍ້ອນເຫດປັດໄຈໄດ້ແດ່ບໍ?

ສະພາວະທຳທີ່ເປັນອັບພະຍາກະຕະອາໄສສະພາວະທຳທີ່ເປັນກຸສົນ ທີ່ເປັນອະກຸສົນ ແລະທີ່ເປັນອັບພະຍາກະຕະເພິ່ງເກີດຂຶ້ນຍ້ອນເຫດປັດໄຈໄດ້ແດ່ບໍ?

ສະພາວະທຳທີ່ເປັນກຸສົນ ແລະທີ່ເປັນອັບພະຍາກະຕະອາໄສສະພາວະທຳທີ່ເປັນກຸສົນທີ່ເປັນອະກຸສົນ ແລະທີ່ເປັນອັບພະຍາກະຕະເພິ່ງເກີດຂຶ້ນຍ້ອນເຫດປັດໄຈໄດ້ແດ່ບໍ?

ສະພາວະທຳທີ່ເປັນອະກຸສົນ ແລະທີ່ເປັນອັບພະຍາກະຕະອາໄສສະພາວະທຳທີ່ເປັນກຸສົນທີ່ເປັນອະກຸສົນ ແລະທີ່ເປັນອັບພະຍາກະຕະເພິ່ງເກີດຂຶ້ນຍ້ອນເຫດປັດໄຈໄດ້ແດ່ບໍ?

ສະພາວະທຳທີ່ເປັນກຸສົນ ແລະທີ່ເປັນອະກຸສົນອາໄສສະພາວະທຳທີ່ເປັນກຸສົນ ທີ່ເປັນອະກຸສົນ ແລະທີ່ເປັນອັບພະຍາກະຕະເພິ່ງເກີດຂຶ້ນຍ້ອນເຫດປັດໄຈໄດ້ແດ່ບໍ?

ສະພາວະທຳທີ່ເປັນກຸສົນທີ່ເປັນອະກຸສົນ ແລະທີ່ເປັນອັບພະຍາກະຕະອາໄສສະພາວະທຳທີ່ເປັນກຸສົນ ທີ່ເປັນອະກຸສົນ ແລະທີ່ເປັນອັບພະຍາກະຕະເພິ່ງເກີດຂຶ້ນຍ້ອນເຫດປັດໄຈໄດ້ແດ່ບໍ?

**ເຫຕຸປັດຈະຍະວາຣະ ຈົບ**

[໓໘] ສະພາວະທຳທີ່ເປັນກຸສົນອາໄສສະພາວະທຳທີ່ເປັນກຸສົນເພິ່ງເກີດຂຶ້ນຍ້ອນອາຣຳມະນະປັດໄຈໄດ້ແດ່ບໍ?

(ແມ່ນອາຣຳມະນະປັດໄຈກໍເພິ່ງອະທິບາຍໃຫ້ພິສະດານເໝືອນເຫຕຸໄຈຕາມແນວທາງແຫ່ງຄຳສອນ)

[໓໓] ສະພາວະທຳທີ່ເປັນກຸສົນອາໄສສະພາວະທຳທີ່ເປັນກຸສົນເພິ່ງເກີດຂຶ້ນຍ້ອນອະທິປະຕິປັດໄຈໄດ້ແດ່ບໍ?

ฯລฯ ຍ້ອນອະນັນຕະຣະປັດໄຈ ຍ້ອນສະມະນັນຕະຣະປັດໄຈ ຍ້ອນສະຫະຊາຕະປັດໄຈ ຍ້ອນອັນຍະມັນຍະປັດໄຈ ຍ້ອນນິດສະຍະປັດໄຈ ຍ້ອນອຸປະນິດສະຍະປັດໄຈ ຍ້ອນປຸເຣຊາຕະປັດໄຈຍ້ອນປັດສາຊາຕະປັດໄຈ ຍ້ອນອາເສວະນະປັດໄຈ ຍ້ອນກຳມະປັດໄຈ ຍ້ອນວິປາກະປັດໄຈຍ້ອນອາຫາຣະປັດໄຈ ຍ້ອນອິນຊີຍະປັດໄຈ ຍ້ອນຊານະປັດໄຈ ຍ້ອນມັກຄະປັດໄຈ ຍ້ອນສຳປະຍຸດຕະປັດໄຈ ຍ້ອນວິປປະຍຸດຕະປັດໄຈ ຍ້ອນອັດຖິປັດໄຈ ຍ້ອນນັດຖິປັດໄຈ ຍ້ອນວິຄະຕະປັດໄຈໄດ້ແດ່ບໍ?

[໓໔] ສະພາວະທຳທີ່ເປັນກຸສົນອາໄສສະພາວະທຳທີ່ເປັນກຸສົນເພິ່ງເກີດຂຶ້ນ ຍ້ອນອະວິຄະຕະປັດໄຈໄດ້ແດ່ບໍ? ฯລฯ ອາໄສສະພາວະທຳທີ່ເປັນອະກຸສົນ ฯລฯ ອາໄສສະພາວະທຳທີ່

ເປັນອັບພະຍາກະຕະ ฯລฯ ອາໄສສະພາວະທຳທີ່ເປັນກຸສົນແລະທີ່ເປັນອັບພະຍາກະຕະ ฯລฯ ອາໄສສະພາວະທຳທີ່ເປັນອະກຸສົນແລະທີ່ເປັນອັບພະຍາກະຕະ ฯລฯ ອາໄສສະພາວະທຳທີ່ເປັນກຸສົນແລະທີ່ເປັນອະກຸສົນ ฯລฯ

ສະພາວະທຳທີ່ເປັນກຸສົນອາໄສສະພາວະທຳທີ່ເປັນກຸສົນ ທີ່ເປັນອະກຸສົນ ແລະທີ່ເປັນອັບພະຍາກະຕະເພິ່ງເກີດຂຶ້ນ ฯລฯ ສະພາວະທຳທີ່ເປັນອະກຸສົນເພິ່ງເກີດຂຶ້ນ ฯລฯ ສະພາວະທຳທີ່ເປັນອັບພະຍາກະຕະເພິ່ງເກີດຂຶ້ນ ฯລฯ ສະພາວະທຳທີ່ເປັນກຸສົນແລະທີ່ເປັນອັບພະຍາກະຕະເພິ່ງເກີດຂຶ້ນ ฯລฯ ສະພາວະທຳທີ່ເປັນອະກຸສົນ ແລະທີ່ເປັນອັບພະຍາກະຕະເພິ່ງເກີດຂຶ້ນ ฯລฯ ສະພາວະທຳທີ່ເປັນກຸສົນແລະທີ່ເປັນອະກຸສົນເພິ່ງເກີດຂຶ້ນ ฯລฯ ສະພາວະທຳທີ່ເປັນກຸສົນທີ່ເປັນອະກຸສົນ ແລະທີ່ເປັນອັບພະຍາກະຕະເພິ່ງເກີດຂຶ້ນຍ້ອນອະວິຄະຕະປັດໄຈໄດ້ແດ່ບໍ?

(ແມ່ນອະວິຄະຕະປັດໄຈກໍເພິ່ງອະທິບາຍໃຫ້ພິສະດານເໝືອນເຫຕຸໄຈຕາມແນວທາງແຫ່ງຄຳສອນ)

**ເອກະມູລະກະໄນ ຈົບ**

# ທຸມູລະກະໄນເປັນຕົ້ນ
# ເຫກາໄກໄຕຸມູລະກະໄນ

[໓໔] ສະພາວະທຳທີ່ເປັນກຸສົນອາໄສສະພາວະທຳທີ່ເປັນກຸສົນເພິ່ງເກີດຂຶ້ນຍ້ອນເຫດປັດໄຈ ຍ້ອນອາຣຳມະນະປັດໄຈໄດ້ແດ່ບໍ? ฯລฯ ສະພາວະທຳທີ່ເປັນກຸສົນທີ່ເປັນອະກຸສົນແລະທີ່ເປັນອັບພະຍາກະຕະອາໄສສະພາວະທຳທີ່ເປັນກຸສົນທີ່ເປັນອະກຸສົນແລະທີ່ເປັນອັບພະຍາກະຕະ ເພິ່ງເກີດຂຶ້ນຍ້ອນເຫຕຸປັດໄຈ ຍ້ອນອາຣຳມະນະປັດໄຈໄດ້ແດ່ບໍ?

[໓໕] ສະພາວະທຳທີ່ເປັນກຸສົນອາໄສສະພາວະທຳທີ່ເປັນກຸສົນເພິ່ງເກີດຂຶ້ນຍ້ອນເຫດປັດໄຈ ຍ້ອນອະທິປະຕິປັດໄຈໄດ້ແດ່ບໍ? ฯລฯ ຍ້ອນເຫຕຸປັດໄຈ ຍ້ອນອະນັນຕະຣະປັດໄຈ ฯລฯ ຍ້ອນເຫຕຸປັດໄຈ ຍ້ອນສະມະນັນຕະຣະປັດໄຈ ฯລฯ ຍ້ອນເຫຕຸປັດໄຈ ຍ້ອນອະວິຄະຕະປັດໄຈໄດ້ແດ່ບໍ?

**ທຸມູລະກະໄນ ຈົບ**

[໓໖] ສະພາວະທຳທີ່ເປັນກຸສົນອາໄສສະພາວະທຳທີ່ເປັນກຸສົນເພິ່ງເກີດຂຶ້ນຍ້ອນເຫດປັດໄຈ ຍ້ອນອາຣຳມະນະປັດໄຈ ຍ້ອນອະທິປະຕິປັດໄຈໄດ້ແດ່ບໍ? ฯລฯ ຍ້ອນເຫດປັດໄຈ ຍ້ອນອາຣຳມະນະປັດໄຈ ຍ້ອນອະນັນຕະຣະປັດໄຈ ฯລฯ ຍ້ອນເຫຕຸປັດໄຈ ຍ້ອນອາຣຳມະນະປັດໄຈ ຍ້ອນອະວິຄະຕະປັດໄຈໄດ້ແດ່ບໍ?

**ຕິມູລະກະໄນ ຈົບ**

[໓໘] ສະພາວະທຳທີ່ເປັນກຸສົນອາໄສສະພາວະທຳທີ່ເປັນກຸສົນເພິ່ງເກີດຂຶ້ນຍ້ອນເຫດປັດໄຈ ຍ້ອນອາຣຳມະນະປັດໄຈ ຍ້ອນອະທິປະຕິປັດໄຈ ຍ້ອນອະນັນຕະຣະປັດໄຈໄດ້ແດ່ບໍ? ຯລຯ ຍ້ອນເຫຕຸປັດໄຈ ຍ້ອນອາຣຳມະນະປັດໄຈ ຍ້ອນອະທິປະຕິປັດໄຈ ຍ້ອນອະວິຄະຕະປັດໄຈໄດ້ແດ່ບໍ?

### ຈະຕຸມູລະກະໄນ ຈົບ

(ທ່ານໄດ້ຫຍໍ້ປັນຈະມູລະກະໄນເປັນຕົ້ນໄວ້ແລ້ວ ຜູ້ຮູ້ເພິ່ງອະທິບາຍເອກະມູລະກະໄນ ທຸມູລະກະໄນ ຕິມູລະກະໄນ ຈະຕຸມູລະກະໄນ ປັນຈະມູລະກະໄນ ສັບພະມູລະກະໄນຂອງບົດແຕ່ລະບົດໃຫ້ພິສະດານ)

### ເຫຕຸມູລະກະໄນ ຈົບ

## ອາຣຳມະນະມູລະກະໄນເປັນຕົ້ນ

[໓໙] ສະພາວະທຳທີ່ເປັນກຸສົນອາໄສສະພາວະທຳທີ່ເປັນກຸສົນ ເພິ່ງເກີດຂຶ້ນຍ້ອນອາຣຳມະນະປັດໄຈ ຍ້ອນເຫດປັດໄຈໄດ້ແດ່ບໍ? ຍ້ອນອາຣຳມະນະປັດໄຈ ຍ້ອນອະທິປະຕິ ປັດໄຈ ຯລຯ ຍ້ອນອາຣຳມະນະປັດໄຈ ຍ້ອນອະວິຄະຕະປັດໄຈໄດ້ແດ່ບໍ?

ສະພາວະທຳທີ່ເປັນກຸສົນອາໄສສະພາວະທຳທີ່ເປັນກຸສົນເພິ່ງເກີດຂຶ້ນ ຍ້ອນອະທິປະຕິປັດໄຈໄດ້ແດ່ບໍ? ຍ້ອນອະນັນຕະຣະປັດໄຈ ຍ້ອນສະມະນັນຕະຣະປັດໄຈ ຍ້ອນສະຫະຊາຕະປັດໄຈ ຍ້ອນອັນຍະມັນຍະປັດໄຈ ຍ້ອນອະວິຄະຕະປັດໄຈ ຍ້ອນເຫຕຸປັດໄຈ ຍ້ອນອະວິຄະຕະປັດໄຈ ຍ້ອນອາຣຳມະນະປັດໄຈ ຍ້ອນອະວິຄະຕະປັດໄຈ ຍ້ອນອະທິປະຕິປັດໄຈ ຯລຯ ຍ້ອນອະວິຄະຕະປັດໄຈ ຍ້ອນວິຄະຕະປັດໄຈໄດ້ແດ່ບໍ?

### ທຸມູລະກະໄນ ຈົບ

[໔໐] ສະພາວະທຳທີ່ເປັນກຸສົນອາໄສສະພາວະທຳທີ່ເປັນກຸສົນເພິ່ງເກີດຂຶ້ນຍ້ອນອະວິຄະຕະປັດໄຈ ຍ້ອນເຫຕຸປັດໄຈ ຍ້ອນອາຣຳມະນະປັດໄຈໄດ້ແດ່ບໍ? ຍ້ອນອະວິຄະຕະປັດໄຈ ຍ້ອນເຫຕຸປັດໄຈ ຍ້ອນອະທິປະຕິປັດໄຈ ຍ້ອນອະວິຄະຕະປັດໄຈ ຍ້ອນເຫຕຸປັດໄຈ ຍ້ອນອະນັນຕະຣະປັດໄຈ ຯລຯ ຍ້ອນອະວິຄະຕະປັດໄຈ ຍ້ອນເຫຕຸປັດໄຈ ຍ້ອນວິຄະຕະປັດໄຈໄດ້ແດ່ບໍ່

[໔໑] ສະພາວະທຳທີ່ເປັນກຸສົນອາໄສສະພາວະທຳທີ່ເປັນກຸສົນ ເພິ່ງເກີດຂຶ້ນຍ້ອນອະວິຄະຕະປັດໄຈ ຍ້ອນເຫຕຸປັດໄຈ ຍ້ອນອາຣຳມະນະປັດໄຈ ຍ້ອນອະທິປະຕິປັດໄຈໄດ້ແດ່ບໍ່?

ຍ້ອນອະວິຄະຕະປັດໄຈ ຍ້ອນເຫຕຸປັດໄຈ ຍ້ອນອາຣໍາມະນະປັດໄຈ ຍ້ອນອະນັນຕະຣະປັດໄຈ ໗ລ໗ ຍ້ອນວິຄະຕະປັດໄຈໄດ້ແດ່ບໍ?

(ຜູ້ຮູ້ເພິ່ງອະທິບາຍເອກະມູລະກະໄນ ທຸມູລະກະໄນ ຕິມູລະກະໄນ ຈະຕຸມູລະກະໄນ ປັນຈະມູລະກະໄນ ສັບພະມູລະກະໄນຂອງບົດແຕ່ລະບົດໃຫ້ພິສະດານ)

ອະນຸໂລມມີໄນອັນເລີກເຊິ່ງ ໖ ປະການ ຄື

໑. ຕິກະປັດຖານ ໒. ທຸກະປັດຖານ
໓. ທຸກະຕິກະປັດຖານ ໔. ຕິກະທຸກະປັດຖານ
໕. ຕິກະຕິກະປັດຖານ ໖. ທຸກະທຸກະປັດຖານ

ແຕ່ລະປັດຖານປະເສີດສູງສຸດ

## ໒. ປັດຈະຍະປັດຈະນີຍະ

[໔໒] ສະພາວະທໍາທີ່ເປັນກຸສົນອາໄສສະພາວະທໍາທີ່ເປັນກຸສົນເພິ່ງເກີດຂຶ້ນຍ້ອນນະເຫຕຸປັດໄຈ[១] ໄດ້ແດ່ບໍ?

(ເພິ່ງອະທິບາຍນະເຫຕຸປັດໄຈແມ່ນໃນປັດຈະນີຍະໃຫ້ພິສະດານເໝືອນເຫຕຸປັດໄຈໃນອະນຸໂລມ)

[໔໓] ສະພາວະທໍາທີ່ເປັນກຸສົນອາໄສສະພາວະທໍາທີ່ເປັນກຸສົນ ເພິ່ງເກີດຂຶ້ນຍ້ອນນະອາຣໍາມະນະປັດໄຈໄດ້ແດ່ບໍ? ຍ້ອນນະອະທິປະຕິປັດໄຈ ຍ້ອນນະອະນັນຕະຣະປັດໄຈ ຍ້ອນນະສະມະນັນຕະຣະປັດໄຈ ຍ້ອນນະສະຫະຊາຕະປັດໄຈ ຍ້ອນນະອັນຍະມັນຍະປັດໄຈ ຍ້ອນນະນິດສະຍະປັດໄຈ ຍ້ອນນະອຸປະນິດສະຍະປັດໄຈ ຍ້ອນນະປຸເຣຊາຕະປັດໄຈ ຍ້ອນນະປັດສາຊາຕະປັດໄຈ ຍ້ອນນະອາເສວະນະປັດໄຈ ຍ້ອນນະກໍາມະປັດໄຈ ຍ້ອນນະວິປາກະປັດໄຈ ຍ້ອນນະອາຫາຣະປັດໄຈ ຍ້ອນນະອິນທະຣິຍະປັດໄຈ ຍ້ອນນະຊານະປັດໄຈ ຍ້ອນນະມັກຄະປັດໄຈ ຍ້ອນນະສໍາປະຍຸດຕະປັດໄຈ ຍ້ອນນະວິບປະຍຸດຕະປັດໄຈ ຍ້ອນໂນອັດຖິປັດໄຈ ຍ້ອນໂນນັດຖິປັດໄຈ ຍ້ອນໂນວິຄະຕະປັດໄຈ ຍ້ອນໂນອະວິຄະຕະປັດໄຈໄດ້ແດ່ບໍ?

[໔໔] ສະພາວະທໍາທີ່ເປັນກຸສົນອາໄສສະພາວະທໍາທີ່ເປັນກຸສົນ ເພິ່ງເກີດຂຶ້ນຍ້ອນນະເຫຕຸປັດໄຈ ຍ້ອນນະອາຣໍາມະນະປັດໄຈໄດ້ແດ່ບໍ?

(ແມ່ນໃນປັດຈະນີຍະ ຜູ້ຮູ້ເພິ່ງອະທິບາຍເອກະມູລະກະໄນ ທຸມູລະກະໄນ ຕິມູລະກະໄນ ຈະຕຸມູລະກະໄນ ຈົນເຖິງເຕວີສະຕິມູລະກະໄນຂອງບົດ ແຕ່ລະບົດໃຫ້ພິສະດານເໝືອນໃນອະນຸໂລມ)

ປັດຈະນີຍະມີໃນອັນເລີກເຊິ່ງ ໖ ປະການ ຄື

໑. ຕິກະປັດຖານ
໒. ທຸກະຕິກະປັດຖານ
໓. ຕິກະຕິກະປັດຖານ
໔. ທຸກະປັດຖານ
໕. ຕິກະທຸກະປັດຖານ
໖. ທຸກະທຸກະປັດຖານ

ແຕ່ລະປັດຖານປະເສີດສູງສຸດ

## ໒. ປັດຈະຍານຸໂລມປັດຈະນີຍະ

[໔໓] ສະພາວະທຳທີ່ເປັນກຸສົນອາໄສສະພາວະທຳທີ່ເປັນກຸສົນເພິ່ງເກີດຂຶ້ນຍ້ອນເຫດຸປັດໄຈ ຍ້ອນນະອາລົມມະນະປັດໄຈໄດ້ແດ່ບໍ?

ສະພາວະທຳທີ່ເປັນອະກຸສົນອາໄສສະພາວະທຳທີ່ເປັນກຸສົນເພິ່ງເກີດຂຶ້ນ ຍ້ອນເຫດຸປັດໄຈ ຍ້ອນນະອາລົມມະນະປັດໄຈໄດ້ແດ່ບໍ?

(ແມ່ນໃນອະນຸໂລມປັດຈະນີຍະ ຜູ້ຮູ້ເພິ່ງອະທິບາຍບົດໃຫ້ພິສະດານເໝືອນກັບເຫດຸປັດໄຈໃນອະນຸໂລມ)

[໔໖] ສະພາວະທຳທີ່ເປັນກຸສົນອາໄສສະພາວະທຳທີ່ເປັນກຸສົນເພິ່ງເກີດຂຶ້ນ ຍ້ອນເຫດຸປັດໄຈ ຍ້ອນນະອະທິປະຕິປັດໄຈໄດ້ແດ່ບໍ? ຍ້ອນເຫດຸປັດໄຈ ຍ້ອນນະອະນັນຕະຣະປັດໄຈ ฯลฯ ຍ້ອນເຫດຸປັດໄຈ ຍ້ອນໂນອະວິຄະຕະປັດໄຈໄດ້ແດ່ບໍ?

[໔໗] ສະພາວະທຳທີ່ເປັນກຸສົນອາໄສສະພາວະທຳທີ່ເປັນກຸສົນເພິ່ງເກີດຂຶ້ນ ຍ້ອນເຫດຸປັດໄຈ ຍ້ອນອາລົມມະນະປັດໄຈ ຍ້ອນນະອະທິປະຕິປັດໄຈໄດ້ແດ່ບໍ? ຍ້ອນເຫດຸປັດໄຈ ຍ້ອນອາລົມມະນະປັດໄຈ ຍ້ອນນະອະນັນຕະຣະປັດໄຈ ฯลฯ ຍ້ອນເຫດຸປັດໄຈ ຍ້ອນອາລົມມະນະປັດໄຈ ຍ້ອນໂນອະວິຄະຕະປັດໄຈໄດ້ແດ່ບໍ?

ฯลฯ ຍ້ອນເຫດຸປັດໄຈ ຍ້ອນອາລົມມະນະປັດໄຈ ຍ້ອນອະທິປະຕິປັດໄຈ ຍ້ອນນະອະນັນຕະຣະປັດໄຈ ฯลฯ ຍ້ອນເຫດຸປັດໄຈ ຍ້ອນອາລົມມະນະປັດໄຈ ຍ້ອນອະທິປະຕິປັດໄຈ ຍ້ອນໂນອະວິຄະຕະປັດໄຈໄດ້ແດ່ບໍ?

ฯลฯ ຍ້ອນເຫດຸປັດໄຈ ຍ້ອນອາລົມມະນະປັດໄຈ ຍ້ອນອະທິປະຕິປັດໄຈ ຍ້ອນອະນັນຕະຣະປັດໄຈ ຍ້ອນນະສະມະນັນຕະຣະປັດໄຈ ฯลฯ ຍ້ອນເຫດຸປັດໄຈ ຍ້ອນອາລົມມະນະປັດໄຈ ຍ້ອນອະທິປະຕິປັດໄຈ ຍ້ອນອະນັນຕະຣະປັດໄຈ ຍ້ອນໂນອະວິຄະຕະປັດໄຈ ฯลฯ

ฯลฯ ຍ້ອນເຫດຸປັດໄຈ ຍ້ອນອາລົມມະນະປັດໄຈ ຍ້ອນອະທິປະຕິປັດໄຈ ຍ້ອນ ອະນັນຕະຣະປັດໄຈ ຍ້ອນສະມະນັນຕະຣະປັດໄຈ ຍ້ອນສະຫະຊາຕະປັດໄຈ ຍ້ອນອັນຍະມັນຍະປັດໄຈ

ຍ້ອນນິດສະຍະປັດໄຈ ຍ້ອນອຸປະນິດສະຍະປັດໄຈ ຍ້ອນປຸເຣຊາຕະປັດໄຈ ຍ້ອນປັດສາຊາຕະປັດໄຈ ຍ້ອນອາເສວະນະປັດໄຈ ຍ້ອນກຳມະປັດໄຈ ຍ້ອນວິປາກະປັດໄຈ ຍ້ອນອາຫາຣະປັດໄຈ ຍ້ອນອິນຊີຍະປັດໄຈ ຍ້ອນຊານະປັດໄຈ ຍ້ອນມັກຄະປັດໄຈ ຍ້ອນສຳປະຍຸດຕະປັດໄຈ ຍ້ອນວິບປະຍຸດຕະປັດໄຈ ຍ້ອນອັດຖິປັດໄຈ ຍ້ອນນັດຖິປັດໄຈ ຍ້ອນວິຄະຕະປັດໄຈ ຍ້ອນໂນອະວິຄະຕະປັດໄຈໄດ້ແດ່ບໍ?

[໔໗] ສະພາວະທຳທີ່ເປັນກຸສົນອາໄສສະພາວະທຳທີ່ເປັນກຸສົນເພິ່ງເກີດຂຶ້ນ ຍ້ອນອາຣຳມະນະປັດໄຈໄດ້ແດ່ບໍ?

ຯລຯ ຍ້ອນອະທິປະຕິປັດໄຈ ຍ້ອນອະນັນຕະຣະປັດໄຈ ຯລຯ ຍ້ອນອະວິຄະຕະປັດໄຈ ຍ້ອນນະເຫຕຸປັດໄຈ ຍ້ອນອະວິຄະຕະປັດໄຈ ຍ້ອນນະອາຣຳມະນະປັດໄຈ ຯລຯ ຍ້ອນອະວິຄະຕະປັດໄຈ ຍ້ອນໂນວິຄະຕະປັດໄຈໄດ້ແດ່ບໍ?

ຯລຯ ຍ້ອນອະວິຄະຕະປັດໄຈ ຍ້ອນເຫຕຸປັດໄຈ ຍ້ອນນະອາຣຳມະນະປັດໄຈ ຯລຯ ຍ້ອນອະວິຄະຕະປັດໄຈ ຍ້ອນເຫຕຸປັດໄຈ ຍ້ອນໂນວິຄະຕະປັດໄຈໄດ້ແດ່ບໍ?

ຯລຯ ຍ້ອນອະວິຄະຕະປັດໄຈ ຍ້ອນເຫຕຸປັດໄຈ ຍ້ອນອາຣຳມະນະປັດໄຈ ຍ້ອນນະອະທິປະຕິປັດໄຈ ຯລຯ ຍ້ອນອະວິຄະຕະປັດໄຈ ຍ້ອນເຫຕຸປັດໄຈ ຍ້ອນອາຣຳມະນະປັດໄຈ ຍ້ອນໂນວິຄະຕະປັດໄຈໄດ້ແດ່ບໍ?

ຯລຯ ຍ້ອນອະວິຄະຕະປັດໄຈ ຍ້ອນເຫຕຸປັດໄຈ ຍ້ອນອາຣຳມະນະປັດໄຈ ຍ້ອນອະທິປະຕິປັດໄຈ ຍ້ອນອະນັນຕະຣະປັດໄຈ ຍ້ອນສະມະນັນຕະຣະປັດໄຈ ຍ້ອນສະຫະຊາຕະປັດໄຈ ຯລຯ ຍ້ອນໂນວິຄະຕະປັດໄຈໄດ້ແດ່ບໍ?

ອະນຸໂລມປັດຈະນີຍະມີໄນອັນເລີກເຊິ່ງ ໖ ປະການ ຄື

໑. ຕິກະປັດຖານ
໒. ທຸກະປັດຖານ
໓. ທຸກະຕິກະປັດຖານ
໔. ຕິກະທຸກະປັດຖານ
໕. ຕິກະຕິກະປັດຖານ
໖. ທຸກະທຸກະປັດຖານ

ແຕ່ລະປັດຖານປະເສີດສູງສຸດ

## ໔. ປັດຈະຍະປັດຈະນີຍານຸໂລມ

[໔໘] ສະພາວະທຳທີ່ເປັນກຸສົນອາໄສສະພາວະທຳທີ່ເປັນກຸສົນເພິ່ງເກີດຂຶ້ນຍ້ອນ ນະເຫຕຸປັດໄຈ ຍ້ອນອາຣຳມະນະປັດໄຈໄດ້ແດ່ບໍ?

ສະພາວະທຳທີ່ເປັນກຸສົນອາໄສສະພາວະທຳທີ່ເປັນກຸສົນເພິ່ງເກີດຂຶ້ນຍ້ອນນະເຫຕຸປັດໄຈ ຍ້ອນອະທິປະຕິປັດໄຈ ຯລຯ ຍ້ອນນະເຫຕຸປັດໄຈ ຍ້ອນອະວິຄະຕະປັດໄຈໄດ້ແດ່ບໍ?

[໕໐] ສະພາວະທຳທີ່ເປັນກຸສົນອາໄສສະພາວະທຳທີ່ເປັນກຸສົນເພິ່ງເກີດຂຶ້ນ ຍ້ອນ ນະເຫຕຸປັດໄຈ ຍ້ອນນະອາຣຳມະນະປັດໄຈ ຍ້ອນອະທິປະຕິປັດໄຈ ຯລຯ ຍ້ອນອະວິຄະຕະປັດໄຈໄດ້ແດ່ບໍ?

ຯລຯ ຍ້ອນນະເຫຕຸປັດໄຈ ຍ້ອນນະອາຣຳມະນະປັດໄຈ ຍ້ອນນະອະທິປະຕິປັດໄຈ ຯລຯ ຍ້ອນອະວິຄະຕະປັດໄຈໄດ້ແດ່ບໍ? ຍ້ອນນະເຫຕຸປັດໄຈ ຍ້ອນນະອາຣຳມະນະປັດໄຈ ຍ້ອນນະອະທິປະຕິປັດໄຈ ຍ້ອນນະອະນັນຕະຣະປັດໄຈ ຍ້ອນນະສະມະນັນຕະຣະປັດໄຈ ຯລຯ ຍ້ອນໂນອັດຖິປັດໄຈ ຍ້ອນໂນນັດຖິປັດໄຈ ຍ້ອນໂນວິຄະຕະປັດໄຈ ຍ້ອນອະວິຄະຕະປັດໄຈໄດ້ແດ່ບໍ?

[໕໑] ສະພາວະທຳທີ່ເປັນກຸສົນອາໄສສະພາວະທຳທີ່ເປັນກຸສົນເພິ່ງເກີດຂຶ້ນ ຍ້ອນ ນະອາຣຳມະນະປັດໄຈ ຍ້ອນເຫຕຸປັດໄຈໄດ້ແດ່ບໍ?

[໕໒] ສະພາວະທຳທີ່ເປັນກຸສົນອາໄສສະພາວະທຳທີ່ເປັນກຸສົນເພິ່ງເກີດຂຶ້ນ ຍ້ອນ ນະອາຣຳມະນະປັດໄຈ ຍ້ອນອະທິປະຕິປັດໄຈ ຯລຯ ຍ້ອນນະອາຣຳມະນະປັດໄຈ ຍ້ອນອະວິຄະຕະປັດໄຈ ຯລຯ ຍ້ອນໂນອະວິຄະຕະປັດໄຈ ຍ້ອນເຫຕຸປັດໄຈ ຍ້ອນໂນອະວິຄະຕະປັດໄຈ ຍ້ອນອາຣຳມະນະປັດໄຈ ຯລຯ ຍ້ອນໂນອະວິຄະຕະປັດໄຈ ຍ້ອນວິຄະຕະປັດໄຈໄດ້ແດ່ບໍ?

ຯລຯ ຍ້ອນໂນອະວິຄະຕະປັດໄຈ ຍ້ອນນະເຫຕຸປັດໄຈ ຍ້ອນອາຣຳມະນະປັດໄຈ ຯລຯ ຍ້ອນໂນອະວິຄະຕະປັດໄຈ ຍ້ອນນະເຫຕຸປັດໄຈ ຍ້ອນວິຄະຕະປັດໄຈໄດ້ແດ່ບໍ?

ຯລຯ ຍ້ອນໂນອະວິຄະຕະປັດໄຈ ຍ້ອນນະເຫຕຸປັດໄຈ ຍ້ອນນະອາຣຳມະນະປັດໄຈ ຍ້ອນນະອະທິປະຕິປັດໄຈ ຯລຯ ຍ້ອນໂນອັດຖິປັດໄຈ ຍ້ອນໂນນັດຖິປັດໄຈ ຍ້ອນວິຄະຕະປັດໄຈ ໄດ້ແດ່ບໍ?

ປັດຈະນີຍານຸໂລມນີໂນອັນເລີກເຊິ່ງ ໖ ປະການ ຄື

| | |
|---|---|
| ໑. ຕິກະປັດຖານ | ໒. ທຸກະປັດຖານ |
| ໓. ທຸກະຕິກະປັດຖານ | ໔. ຕິກະທຸກະປັດຖານ |
| ໕. ຕິກະຕິກະປັດຖານ | ໖. ທຸກະທຸກະປັດຖານ |

ແຕ່ລະປັດຖານປະເສີດສູງສຸດ

**ປັນນັດຕິວາຣະ ຈົບ**

**ປັດໄຈ ໒໔ ໃນນິດເທສະວາຣະ ຈົບ**

# ໑. ກຸສະລະຕິກະ ໑. ປະຕິດຈະວາຣະ

# ໑. ປັດຈະຍານຸໂລມ ໑. ວິພັງຄະວາຣະ

## ອະນຸໂລມ ເຫຕຸປັດໄຈ

[໕໓] ສະພາວະທຳທີ່ເປັນກຸສົນອາໄສສະພາວະທຳທີ່ເປັນກຸສົນເກີດຂຶ້ນຍ້ອນເຫດປັດໄຈ ໄດ້ແກ່ ຂັນ ໓ ອາໄສຂັນ ໑ ທີ່ເປັນກຸສົນເກີດຂຶ້ນ ຂັນ ໑ ອາໄສຂັນ ໓ ເກີດຂຶ້ນ ຂັນ ໒ ອາໄສຂັນ ໒ ເກີດຂຶ້ນ (໑)

ສະພາວະທຳທີ່ເປັນອັບພະຍາກະຕະອາໄສສະພາວະທຳທີ່ເປັນກຸສົນເກີດຂຶ້ນ ຍ້ອນເຫດປັດໄຈ ໄດ້ແກ່ ຈິດຕະສະມຸດຖານຮູບອາໄສຂັນທີ່ເປັນກຸສົນເກີດຂຶ້ນ (໒)

ສະພາວະທຳທີ່ເປັນກຸສົນ ແລະທີ່ເປັນອັບພະຍາກະຕະອາໄສສະພາວະທຳທີ່ເປັນກຸສົນເກີດຂຶ້ນຍ້ອນເຫດປັດໄຈ ໄດ້ແກ່ ຂັນ ໓ ແລະຈິດຕະສະມຸດຖານຮູບອາໄສຂັນ ໑ ທີ່ເປັນກຸສົນເກີດຂຶ້ນ ຂັນ ໑ ແລະຈິດຕະສະມຸດຖານຮູບອາໄສຂັນ ໓ ເກີດຂຶ້ນ ຂັນ ໒ ແລະຈິດຕະສະມຸດຖານຮູບອາໄສຂັນ ໒ ເກີດຂຶ້ນ (໓)

ສະພາວະທຳທີ່ເປັນອະກຸສົນອາໄສສະພາວະທຳທີ່ເປັນອະກຸສົນເກີດຂຶ້ນຍ້ອນເຫຕຸປັດໄຈ ໄດ້ແກ່ ຂັນ ໓ ອາໄສຂັນ ໑ ທີ່ເປັນອະກຸສົນເກີດຂຶ້ນ ຂັນ ໑ ອາໄສຂັນ ໓ ເກີດຂຶ້ນ ຂັນ ໒ ອາໄສຂັນ ໒ ເກີດຂຶ້ນ (໑)

ສະພາວະທຳທີ່ເປັນອັບພະຍາກະຕະອາໄສສະພາວະທຳທີ່ເປັນອະກຸສົນເກີດຂຶ້ນຍ້ອນເຫດປັດໄຈ ໄດ້ແກ່ຈິດຕະສະມຸດຖານຮູບອາໄສຂັນທີ່ເປັນອະກຸສົນເກີດຂຶ້ນ (໒)

ສະພາວະທຳທີ່ເປັນອະກຸສົນ ແລະທີ່ເປັນອັບພະຍາກະຕະອາໄສສະພາວະທຳທີ່ເປັນອະກຸສົນເກີດຂຶ້ນ ຍ້ອນເຫດປັດໄຈ ໄດ້ແກ່ ຂັນ ໓ ແລະຈິດຕະສະມຸດຖານຮູບອາໄສຂັນ ໑ ທີ່ເປັນອະກຸສົນເກີດຂຶ້ນ ຂັນ ໑ ແລະຈິດຕະສະມຸດຖານຮູບອາໄສຂັນ ໓ ເກີດຂຶ້ນ ຂັນ ໒ ແລະຈິດຕະສະມຸດຖານຮູບອາໄສຂັນ ໒ ເກີດຂຶ້ນ (໓)

ສະພາວະທຳທີ່ເປັນອັບພະຍາກະຕະອາໄສສະພາວະທຳທີ່ເປັນອັບພະຍາກະຕະເກີດຂຶ້ນຍ້ອນເຫດປັດໄຈ ໄດ້ແກ່ ຂັນ ໓ ແລະຈິດຕະສະມຸດຖານຮູບອາໄສຂັນ ໑ ທີ່ເປັນອັບພະຍາກະຕະວິບາກ ແລະທີ່ເປັນອັບພະຍາກະຕະກິຣິຍາເກີດຂຶ້ນ ຂັນ ໑ ແລະຈິດຕະສະມຸດຖານຮູບອາໄສຂັນ ໓ ເກີດຂຶ້ນ ຂັນ ໒ ແລະຈິດຕະສະມຸດຖານຮູບອາໄສຂັນ ໒ ເກີດຂຶ້ນ ໃນປະຕິສົນທິຂະນະ ຂັນ ໓ ແລະ

ກະຕັດຕາຣູບອາໄສຂັນ ໑ ທີ່ເປັນອັບພະຍາກະຕະວິບາກເກີດຂຶ້ນ ຂັນ ໑ ແລະກະຕັດຕາຣູບອາໄສ ຂັນ ໓ ເກີດຂຶ້ນ ຂັນ ໔ ແລະກະຕັດຕາຣູບອາໄສຂັນ ໔ ເກີດຂຶ້ນ ຫະໄທວັດຖຸອາໄສ ຂັນເກີດຂຶ້ນ ຂັນອາໄສຫະໄທວັດຖຸເກີດຂຶ້ນ ມະຫາພູຕະຣູບ ໓ ອາໄສມະຫາພູຕະຣູບ ໑ ເກີດຂຶ້ນ ມະຫາພູຕະຣູບ ໑ ອາໄສມະຫາພູຕະຣູບ ໓ ເກີດຂຶ້ນ ມະຫາພູຕະຣູບ ໔ ອາໄສມະຫາພູຕະຣູບ ໔ ເກີດຂຶ້ນ ຈິດຕະສະມຸດຖານຣູບ ແລະກະຕັດຕາຣູບທີ່ເປັນອຸປາທາຍະຣູບອາໄສມະຫາພູຕະຣູບເກີດຂຶ້ນ (໑)

ສະພາວະທຳທີ່ເປັນອັບພະຍາກະຕະອາໄສສະພາວະທຳທີ່ເປັນກຸສົນ ແລະທີ່ເປັນອັບພະຍາກະຕະ ເກີດຂຶ້ນຍ້ອນເຫດປັດໄຈ ໄດ້ແກ່ຈິດຕະສະມຸດຖານຣູບອາໄສຂັນທີ່ເປັນກຸສົນແລະອາໄສມະຫາພູຕະຣູບເກີດຂຶ້ນ (໑)

ສະພາວະທຳທີ່ເປັນອັບພະຍາກະຕະອາໄສສະພາວະທຳທີ່ເປັນອະກຸສົນ ແລະທີ່ເປັນອັບພະຍາກະຕະ ເກີດຂຶ້ນຍ້ອນເຫດປັດໄຈ ໄດ້ແກ່ຈິດຕະສະມຸດຖານຣູບອາໄສຂັນທີ່ເປັນອະກຸສົນແລະອາໄສມະຫາພູຕະຣູບເກີດຂຶ້ນ (໑)

## ອາຣໍາມະນະປັດໄຈ

[໕໔] ສະພາວະທຳທີ່ເປັນກຸສົນອາໄສສະພາວະທຳທີ່ເປັນກຸສົນເກີດຂຶ້ນ ຍ້ອນອາຣໍາມະນະປັດໄຈ ໄດ້ແກ່ ຂັນ ໓ ອາໄສຂັນ ໑ ທີ່ເປັນກຸສົນເກີດຂຶ້ນ ຂັນ ໑ ອາໄສ ຂັນ ໓ ເກີດຂຶ້ນ ຂັນ ໔ ອາໄສຂັນ ໔ ເກີດຂຶ້ນ (໑)

ສະພາວະທຳທີ່ເປັນອະກຸສົນອາໄສສະພາວະທຳທີ່ເປັນອະກຸສົນເກີດຂຶ້ນ ຍ້ອນອາຣໍາມະນະປັດໄຈ ໄດ້ແກ່ ຂັນ ໓ ອາໄສຂັນ ໑ ທີ່ເປັນອະກຸສົນເກີດຂຶ້ນ ຂັນ ໑ ອາໄສ ຂັນ ໓ ເກີດຂຶ້ນ ຂັນ ໔ ອາໄສຂັນ ໔ ເກີດຂຶ້ນ (໑)

ສະພາວະທຳທີ່ເປັນອັບພະຍາກະຕະອາໄສສະພາວະທຳທີ່ເປັນອັບພະຍາກະຕະເກີດຂຶ້ນຍ້ອນອາຣໍາມະນະປັດໄຈ ໄດ້ແກ່ ຂັນ ໓ ອາໄສຂັນ ໑ ທີ່ເປັນອັບພະຍາກະຕະວິບາກແລະທີ່ເປັນອັບພະຍາກະຕະກິຣິຍາເກີດຂຶ້ນ ຂັນ ໑ ອາໄສຂັນ ໓ ເກີດຂຶ້ນ ຂັນ ໔ ອາໄສຂັນ ໔ ເກີດຂຶ້ນ ໃນປະຕິສົນທິຂະນະ ຂັນ ໓ ອາໄສຂັນ ໑ ທີ່ເປັນອັບພະຍາກະຕະວິບາກເກີດຂຶ້ນ ຂັນ ໑ ອາໄສ ຂັນ ໓ ເກີດຂຶ້ນ ຂັນ ໔ ອາໄສຂັນ ໔ ເກີດຂຶ້ນ ຂັນອາໄສຫະໄທວັດຖຸເກີດຂຶ້ນ (໑)

## ອະທິປະຕິປັດໄຈ

[໕໕] ສະພາວະທຳທີ່ເປັນກຸສົນອາໄສສະພາວະທຳທີ່ເປັນກຸສົນເກີດຂຶ້ນຍ້ອນອະທິປະຕິປັດໄຈ ໄດ້ແກ່ ຂັນ ໓ ອາໄສຂັນ ໑ ທີ່ເປັນກຸສົນເກີດຂຶ້ນ ຂັນ ໑ ອາໄສຂັນ ໓ ເກີດຂຶ້ນ ຂັນ ໔ ອາໄສຂັນ ໔ ເກີດຂຶ້ນ (໑)

ສະພາວະທຳທີ່ເປັນອັບພະຍາກະຕະອາໄສສະພາວະທຳທີ່ເປັນກຸສົນເກີດຂຶ້ນຍ້ອນອະທິປະຕິປັດໄຈ ໄດ້ແກ່ ຈິດຕະສະມຸດຖານຮູບອາໄສຂັນທີ່ເປັນກຸສົນເກີດຂຶ້ນ (໔)

ສະພາວະທຳທີ່ເປັນກຸສົນ ແລະທີ່ເປັນອັບພະຍາກະຕະອາໄສສະພາວະທຳທີ່ເປັນກຸສົນເກີດຂຶ້ນຍ້ອນອະທິປະຕິປັດໄຈ ໄດ້ແກ່ ຂັນ ໓ ແລະຈິດຕະສະມຸດຖານຮູບອາໄສຂັນ ໑ ທີ່ເປັນກຸສົນເກີດຂຶ້ນ ຂັນ ໑ ແລະຈິດຕະສະມຸດຖານຮູບອາໄສຂັນ ໓ ເກີດຂຶ້ນ ຂັນ ໔ ແລະຈິດຕະສະມຸດຖານຮູບອາໄສຂັນ ໔ ເກີດຂຶ້ນ (໓)

ສະພາວະທຳທີ່ເປັນອະກຸສົນອາໄສສະພາວະທຳທີ່ເປັນອະກຸສົນເກີດຂຶ້ນ ຍ້ອນອະທິປະຕິປັດໄຈ ໄດ້ແກ່ ຂັນ ໓ ອາໄສຂັນ ໑ ທີ່ເປັນອະກຸສົນເກີດຂຶ້ນ ຂັນ ໑ ອາໄສຂັນ ໓ ເກີດຂຶ້ນ ຂັນ ໔ ອາໄສຂັນ ໔ ເກີດຂຶ້ນ (໑)

ສະພາວະທຳທີ່ເປັນອັບພະຍາກະຕະອາໄສສະພາວະທຳທີ່ເປັນອະກຸສົນເກີດຂຶ້ນຍ້ອນອະທິປະຕິປັດໄຈ ໄດ້ແກ່ ຈິດຕະສະມຸດຖານຮູບອາໄສຂັນທີ່ເປັນອະກຸສົນເກີດຂຶ້ນ (໔)

ສະພາວະທຳທີ່ເປັນອະກຸສົນ ແລະທີ່ເປັນອັບພະຍາກະຕະອາໄສສະພາວະທຳທີ່ເປັນອະກຸສົນເກີດຂຶ້ນຍ້ອນອະທິປະຕິປັດໄຈ ໄດ້ແກ່ ຂັນ ໓ ແລະຈິດຕະສະມຸດຖານຮູບອາໄສຂັນ ໑ ທີ່ເປັນ ອະກຸສົນເກີດຂຶ້ນ ຂັນ ໑ ແລະຈິດຕະສະມຸດຖານຮູບອາໄສຂັນ ໓ ເກີດຂຶ້ນ ຂັນ ໔ ແລະຈິດຕະສະມຸດຖານຮູບອາໄສຂັນ ໔ ເກີດຂຶ້ນ (໓)

ສະພາວະທຳທີ່ເປັນອັບພະຍາກະຕະອາໄສສະພາວະທຳທີ່ເປັນອັບພະຍາກະຕະເກີດຂຶ້ນຍ້ອນອະທິປະຕິປັດໄຈ ໄດ້ແກ່ ຂັນ ໓ ແລະຈິດຕະສະມຸດຖານຮູບອາໄສຂັນ ໑ ທີ່ເປັນອັບພະຍາກະຕະວິບາກ ແລະອັບພະຍາກະຕະກິຣິຍາເກີດຂຶ້ນ ຂັນ ໑ ແລະຈິດຕະສະມຸດຖານຮູບອາໄສຂັນ ໓ ເກີດຂຶ້ນ ຂັນ ໔ ແລະຈິດຕະສະມຸດຖານຮູບອາໄສຂັນ ໔ ເກີດຂຶ້ນ ມະຫາພູຕະຮູບ ໓ ອາໄສມະຫາພູຕະຮູບ ໑ ເກີດຂຶ້ນ ມະຫາພູຕະຮູບ ໑ ອາໄສມະຫາພູຕະຮູບ ໓ ເກີດຂຶ້ນ ມະຫາພູຕະຮູບ ໔ ອາໄສມະຫາພູຕະຮູບ ໔ ເກີດຂຶ້ນ ຈິດຕະສະມຸດຖານຮູບທີ່ເປັນອຸປາທາຍະຮູບອາໄສມະຫາພູຕະຮູບເກີດຂຶ້ນ (໑)

ສະພາວະທຳທີ່ເປັນອັບພະຍາກະຕະອາໄສສະພາວະທຳທີ່ເປັນກຸສົນແລະທີ່ເປັນອັບພະຍາກະຕະ ເກີດຂຶ້ນຍ້ອນອະທິປະຕິປັດໄຈ ໄດ້ແກ່ ຈິດຕະສະມຸດຖານຮູບອາໄສຂັນທີ່ເປັນກຸສົນແລະອາໄສມະຫາພູຕະຮູບເກີດຂຶ້ນ (໑)

ສະພາວະທຳທີ່ເປັນອັບພະຍາກະຕະອາໄສສະພາວະທຳທີ່ເປັນອະກຸສົນແລະທີ່ເປັນອັບພະຍາກະຕະເກີດຂຶ້ນຍ້ອນອະທິປະຕິປັດໄຈ ໄດ້ແກ່ ຈິດຕະສະມຸດຖານຮູບອາໄສຂັນທີ່ເປັນອະກຸສົນ ແລະ ອາໄສມະຫາພູຕະຮູບເກີດຂຶ້ນ (໑)

## ອະນັນຕະຣະປັດໄຈແລະສະມະນັນຕະຣະປັດໄຈ

[໕໖] ສະພາວະທຳທີ່ເປັນກຸສົນອາໄສສະພາວະທຳທີ່ເປັນກຸສົນເກີດຂຶ້ນຍ້ອນອະນັນຕະຣະປັດໄຈ ຍ້ອນສະມະນັນຕະຣະປັດໄຈ ໄດ້ແກ່ ຂັນ ໓ ອາໄສຂັນ ໑ ທີ່ເປັນກຸສົນເກີດຂຶ້ນ (ອະນັນຕະຣະປັດໄຈແລະສະມະນັນຕະຣະປັດໄຈເໝືອນກັບອາຣົມມະນະປັດໄຈ)

## ສະຫະຊາຕະປັດໄຈ

[໕໗] ສະພາວະທຳທີ່ເປັນກຸສົນອາໄສສະພາວະທຳທີ່ເປັນກຸສົນເກີດຂຶ້ນຍ້ອນສະຫະຊາຕະປັດໄຈ ໄດ້ແກ່ ຂັນ ໓ ອາໄສຂັນ ໑ ທີ່ເປັນກຸສົນເກີດຂຶ້ນ ຂັນ ໑ ອາໄສຂັນ ໓ ເກີດຂຶ້ນ ຂັນ ໔ ອາໄສຂັນ ໔ ເກີດຂຶ້ນ (໑)

ສະພາວະທຳທີ່ເປັນອັບພະຍາກະຕະອາໄສສະພາວະທຳທີ່ເປັນກຸສົນເກີດຂຶ້ນຍ້ອນສະຫະຊາຕະປັດໄຈ ໄດ້ແກ່ ຈິດຕະສະມຸດຖານຮູບອາໄສຂັນທີ່ເປັນກຸສົນເກີດຂຶ້ນ (໔)

ສະພາວະທຳທີ່ເປັນກຸສົນ ແລະທີ່ເປັນອັບພະຍາກະຕະອາໄສສະພາວະທຳທີ່ເປັນກຸສົນເກີດຂຶ້ນຍ້ອນສະຫະຊາຕະປັດໄຈ ໄດ້ແກ່ ຂັນ ໓ ແລະຈິດຕະສະມຸດຖານຮູບອາໄສຂັນ ໑ ທີ່ເປັນກຸສົນ ເກີດຂຶ້ນ ຂັນ ໑ ແລະຈິດຕະສະມຸດຖານຮູບອາໄສຂັນ ໓ ເກີດຂຶ້ນ ຂັນ ໔ ແລະ ຈິດຕະສະມຸດຖານຮູບອາໄສຂັນ ໔ ເກີດຂຶ້ນ (໓)

ສະພາວະທຳທີ່ເປັນອະກຸສົນອາໄສສະພາວະທຳທີ່ເປັນອະກຸສົນເກີດຂຶ້ນຍ້ອນສະຫະຊາຕະປັດໄຈ ໄດ້ແກ່ ຂັນ ໓ ອາໄສຂັນ ໑ ທີ່ເປັນອະກຸສົນເກີດຂຶ້ນ ຂັນ ໑ ອາໄສ ຂັນ ໓ ເກີດຂຶ້ນ ຂັນ ໔ ອາໄສຂັນ ໔ ເກີດຂຶ້ນ (໑)

ສະພາວະທຳທີ່ເປັນອັບພະຍາກະຕະອາໄສສະພາວະທຳທີ່ເປັນອະກຸສົນເກີດຂຶ້ນຍ້ອນສະຫະຊາຕະປັດໄຈ ໄດ້ແກ່ ຈິດຕະສະມຸດຖານຮູບອາໄສຂັນທີ່ເປັນອະກຸສົນເກີດຂຶ້ນ (໔)

ສະພາວະທຳທີ່ເປັນອະກຸສົນ ແລະທີ່ເປັນອັບພະຍາກະຕະອາໄສສະພາວະທຳທີ່ເປັນອະກຸສົນເກີດຂຶ້ນຍ້ອນສະຫະຊາຕະປັດໄຈ ໄດ້ແກ່ ຂັນ ໓ ແລະຈິດຕະສະມຸດຖານຮູບອາໄສຂັນ ໑ ທີ່ເປັນ ອະກຸສົນເກີດຂຶ້ນ ຂັນ ໑ ແລະຈິດຕະສະມຸດຖານຮູບອາໄສຂັນ ໓ ເກີດຂຶ້ນ ຂັນ ໔ ແລະຈິດຕະສະມຸດຖານຮູບອາໄສຂັນ ໔ ເກີດຂຶ້ນ (໓)

ສະພາວະທຳທີ່ເປັນອັບພະຍາກະຕະອາໄສສະພາວະທຳທີ່ເປັນອັບພະຍາກະຕະເກີດຂຶ້ນຍ້ອນສະຫະຊາຕະປັດໄຈ ໄດ້ແກ່ ຂັນ ໓ ແລະຈິດຕະສະມຸດຖານຮູບອາໄສຂັນ ໑ ທີ່ເປັນອັບພະຍາກະຕະ ວິບາກແລະທີ່ເປັນອັບພະຍາກະຕະກິຣິຍາເກີດຂຶ້ນ ຂັນ ໑ ແລະຈິດຕະສະມຸດຖານຮູບອາໄສຂັນ ໓ ເກີດຂຶ້ນ ຂັນ ໔ ແລະຈິດຕະສະມຸດຖານຮູບອາໄສຂັນ ໔ ເກີດຂຶ້ນ ໃນປະຕິສົນທິຂະນະ ຂັນ ໓ ແລະກະຕັດຕາຮູບອາໄສຂັນ ໑ ທີ່ເປັນອັບພະຍາກະຕະວິບາກເກີດຂຶ້ນ ຂັນ ໑

ແລະ ກະຕັດຕາຮູບອາໄສຂັນ ໑ ເກີດຂຶ້ນ ຂັນ ໔ ແລະກະຕັດຕາຮູບອາໄສຂັນ ໔ ເກີດຂຶ້ນ ຫະໄທວັດຖຸອາໄສຂັນເກີດຂຶ້ນ ຂັນອາໄສຫະໄທວັດຖຸເກີດຂຶ້ນ ມະຫາພູຕະຮູບ ໑ ອາໄສ ມະຫາພູຕະຮູບ ໑ ເກີດຂຶ້ນ ມະຫາພູຕະຮູບ ໑ ອາໄສມະຫາພູຕະຮູບ ໑ ເກີດຂຶ້ນ ມະຫາພູຕະຮູບ ໔ ອາໄສມະຫາພູຕະຮູບ ໔ ເກີດຂຶ້ນ ຈິດຕະສະມຸດຖານຮູບ ແລະກະຕັດຕາຮູບທີ່ເປັນອຸປາທາຍະຮູບ ອາໄສມະຫາພູຕະຮູບເກີດຂຶ້ນ ມະຫາພູຕະຮູບ ໑ ອາໄສມະຫາພູຕະຮູບ ໑ ທີ່ເປັນພາຍນອກເກີດຂຶ້ນ ມະຫາພູຕະຮູບ ໑ ອາໄສມະຫາພູຕະຮູບ ໑ ເກີດຂຶ້ນ ມະຫາພູຕະຮູບ ໔ ອາໄສມະຫາພູຕະຮູບ ໔ ເກີດຂຶ້ນ ອຸປາທາຍະຮູບອາໄສມະຫາພູຕະຮູບເກີດຂຶ້ນ ມະຫາພູຕະຮູບ ໑ ອາໄສມະຫາພູຕະຮູບ ໑ ທີ່ມີອາຫານເປັນສະມຸດຖານເກີດຂຶ້ນ ມະຫາພູຕະຮູບ ໑ ອາໄສມະຫາພູຕະຮູບ ໑ ເກີດຂຶ້ນ ມະຫາພູຕະຮູບ ໔ ອາໄສມະຫາພູຕະຮູບ ໔ ເກີດຂຶ້ນ ອຸປາທາຍະຮູບອາໄສມະຫາພູຕະຮູບເກີດຂຶ້ນ ມະຫາພູຕະຮູບ ໑ ອາໄສມະຫາພູຕະຮູບ ໑ ທີ່ມີອຸຕຸເປັນສະມຸດຖານເກີດຂຶ້ນ ມະຫາພູຕະຮູບ ໑ ອາໄສມະຫາພູຕະຮູບ ໑ ເກີດຂຶ້ນ ມະຫາພູຕະຮູບ ໔ ອາໄສມະຫາພູຕະຮູບ ໔ ເກີດຂຶ້ນ ອຸປາທາຍະຮູບ ອາໄສມະຫາພູຕະຮູບເກີດຂຶ້ນ ສຳລັບເຫຼົ່າອະສັນຍະສັດຕະພົມ ມະຫາພູຕະຮູບ ໑ ອາໄສ ມະຫາພູຕະຮູບ ໑ ເກີດຂຶ້ນ ມະຫາພູຕະຮູບ ໑ ອາໄສມະຫາພູຕະຮູບ ໑ ເກີດຂຶ້ນ ມະຫາພູຕະຮູບ ໔ ອາໄສມະຫາພູຕະຮູບ ໔ ເກີດຂຶ້ນ ກະຕັດຕາຮູບທີ່ເປັນອຸປາທາຍະຮູບອາໄສມະຫາພູຕະຮູບເກີດຂຶ້ນ (໑)

ສະພາວະທຳທີ່ເປັນອັບພະຍາກະຕະອາໄສສະພາວະທຳທີ່ເປັນກຸສົນ ແລະທີ່ເປັນອັບພະຍາກະຕະເກີດຂຶ້ນ ຍ້ອນສະຫະຊາຕະປັດໄຈ ໄດ້ແກ່ ຈິດຕະສະມຸດຖານຮູບອາໄສຂັນທີ່ເປັນກຸສົນ ແລະອາໄສມະຫາພູຕະຮູບເກີດຂຶ້ນ (໑)

ສະພາວະທຳທີ່ເປັນອັບພະຍາກະຕະອາໄສສະພາວະທຳທີ່ເປັນອະກຸສົນ ແລະທີ່ເປັນອັບພະຍາກະຕະ ເກີດຂຶ້ນຍ້ອນສະຫະຊາຕະປັດໄຈ ໄດ້ແກ່ ຈິດຕະສະມຸດຖານຮູບອາໄສຂັນທີ່ເປັນອະກຸສົນແລະອາໄສມະຫາພູຕະຮູບເກີດຂຶ້ນ (໑)

## ອັນຍະມັນຍະປັດໄຈ

[໔໗] ສະພາວະທຳທີ່ເປັນກຸສົນອາໄສສະພາວະທຳທີ່ເປັນກຸສົນເກີດຂຶ້ນຍ້ອນອັນຍະມັນຍະປັດໄຈ ໄດ້ແກ່ ຂັນ ໑ ອາໄສຂັນ ໑ ທີ່ເປັນກຸສົນເກີດຂຶ້ນ ຂັນ ໑ ອາໄສຂັນ ໑ ເກີດຂຶ້ນ ຂັນ ໔ ອາໄສຂັນ ໔ ເກີດຂຶ້ນ (໑)

ສະພາວະທຳທີ່ເປັນອະກຸສົນອາໄສສະພາວະທຳທີ່ເປັນອະກຸສົນເກີດຂຶ້ນຍ້ອນອັນຍະມັນຍະປັດໄຈ ໄດ້ແກ່ ຂັນ ໑ ອາໄສຂັນ ໑ ທີ່ເປັນອະກຸສົນເກີດຂຶ້ນ ຂັນ ໑ ອາໄສ ຂັນ ໑ ເກີດຂຶ້ນ ຂັນ ໔ ອາໄສຂັນ ໔ ເກີດຂຶ້ນ (໑)

ສະພາວະທຳທີ່ເປັນອັບພະຍາກະຕະ ອາໄສສະພາວະທຳທີ່ເປັນອັບພະຍາກະຕະເກີດຂຶ້ນຍ້ອນອັນຍະມັນຍະປັດໄຈ ໄດ້ແກ່ ຂັນ ໑ ອາໄສຂັນ ໑ ທີ່ເປັນອັບພະຍາກະຕະວິບາກແລະທີ່

ເປັນອັບພະຍາກະຕະກິຣິຍາເກີດຂຶ້ນ ຂັນ ໑ ອາໄສຂັນ ໓ ເກີດຂຶ້ນ ຂັນ ໔ ອາໄສຂັນ ໔ ເກີດຂຶ້ນ ໃນປະຕິສົນທິຂະນະ ຂັນ ໓ ແລະຫະໄທວັດຖຸອາໄສຂັນ ໑ ທີ່ເປັນອັບພະຍາກະຕະວິບາກເກີດຂຶ້ນ ຂັນ ໑ ແລະຫະໄທວັດຖຸອາໄສຂັນ ໓ ເກີດຂຶ້ນ ຂັນ ໔ ແລະຫະໄທວັດຖຸອາໄສຂັນ ໔ ເກີດຂຶ້ນ ຫະໄທວັດຖຸອາໄສຂັນເກີດຂຶ້ນ ຂັນອາໄສຫະໄທວັດຖຸເກີດຂຶ້ນ ມະຫາພູຕະຮູບ ໓ ອາໄສມະຫາພູຕະຮູບ ໑ ເກີດຂຶ້ນ ມະຫາພູຕະຮູບ ໑ ອາໄສມະຫາພູຕະຮູບ ໓ ເກີດຂຶ້ນ ມະຫາພູຕະຮູບ ໔ ອາໄສມະຫາພູຕະຮູບ ໔ ເກີດຂຶ້ນ ທີ່ເປັນພາຍນອກ ฯລฯ ທີ່ມີອາຫານເປັນ ສະມຸດຖານ ฯລฯ ທີ່ມີອຸຕຸເປັນສະມຸດຖານ ฯລฯ ສຳລັບເຫຼົ່າອະສັນຍະສັດຕະພົມ ມະຫາພູຕະຮູບ ໓ ອາໄສມະຫາພູຕະຮູບ ໑ ເກີດຂຶ້ນ ມະຫາພູຕະຮູບ ໑ ອາໄສມະຫາພູຕະຮູບ ໓ ເກີດຂຶ້ນ ມະຫາພູຕະຮູບ ໔ ອາໄສມະຫາພູຕະຮູບ ໔ ເກີດຂຶ້ນ (໑)

## ນິດສະຍະປັດໄຈ

[໔໙] ສະພາວະທຳທີ່ເປັນກຸສົນອາໄສສະພາວະທຳທີ່ເປັນກຸສົນເກີດຂຶ້ນຍ້ອນນິດສະຍະປັດໄຈ ໄດ້ແກ່ ฯລฯ ອາໄສຂັນ ໑ ທີ່ເປັນກຸສົນ (ນິດສະຍະປັດໄຈເໝືອນກັບສະຫະຊາຕະປັດໄຈ)

## ອຸປະນິດສະຍະປັດໄຈ

[໕໐] ສະພາວະທຳທີ່ເປັນກຸສົນອາໄສສະພາວະທຳທີ່ເປັນກຸສົນເກີດຂຶ້ນ ຍ້ອນອຸປະນິດສະຍະປັດໄຈ ໄດ້ແກ່ ฯລฯ ອາໄສຂັນ ໑ ທີ່ເປັນກຸສົນ (ອຸປະນິດສະຍະປັດໄຈເໝືອນກັບອາຣຳມະນະປັດໄຈ)

## ປຸເຣຊາຕະປັດໄຈ

[໕໑] ສະພາວະທຳທີ່ເປັນກຸສົນອາໄສສະພາວະທຳທີ່ເປັນກຸສົນເກີດຂຶ້ນຍ້ອນປຸເຣຊາຕະປັດໄຈ ໄດ້ແກ່ ຂັນ ໓ ອາໄສຂັນ ໑ ທີ່ເປັນກຸສົນເກີດຂຶ້ນ ຂັນ ໑ ອາໄສຂັນ ໓ ເກີດຂຶ້ນ ຂັນ ໔ ອາໄສຂັນ ໔ ເກີດຂຶ້ນ ຂັນອາໄສຫະໄທວັດຖຸເກີດຂຶ້ນ ຍ້ອນປຸເຣຊາຕະປັດໄຈ (໑)

ສະພາວະທຳທີ່ເປັນອະກຸສົນອາໄສສະພາວະທຳທີ່ເປັນອະກຸສົນເກີດຂຶ້ນ ຍ້ອນປຸເຣຊາຕະປັດໄຈ ໄດ້ແກ່ ຂັນ ໓ ອາໄສຂັນ ໑ ທີ່ເປັນອະກຸສົນເກີດຂຶ້ນ ຂັນ ໑ ອາໄສຂັນ ໓ ເກີດຂຶ້ນ ຂັນ ໔ ອາໄສຂັນ ໔ ເກີດຂຶ້ນ ຂັນອາໄສຫະໄທວັດຖຸເກີດຂຶ້ນ ຍ້ອນປຸເຣຊາຕະປັດໄຈ (໑)

ສະພາວະທຳທີ່ເປັນອັບພະຍາກະຕະ ອາໄສສະພາວະທຳທີ່ເປັນອັບພະຍາກະຕະເກີດຂຶ້ນຍ້ອນປຸເຣຊາຕະປັດໄຈ ໄດ້ແກ່ ຂັນ ໓ ອາໄສຂັນ ໑ ທີ່ເປັນອັບພະຍາກະຕະວິບາກແລະທີ່ເປັນ

ອັບພະຍາກະຕະກິຣິຍາເກີດຂຶ້ນ ຂັນ ໑ ອາໄສຂັນ ໓ ເກີດຂຶ້ນ ຂັນ ໒ ອາໄສຂັນ ໒ ເກີດຂຶ້ນ ຂັນອາໄສຫະໄທວັດຖຸເກີດຂຶ້ນຍ້ອນປຸເຣຊາຕະປັດໄຈ (໑)

## ອາເສວະນະປັດໄຈ

[໖໒] ສະພາວະທຳທີ່ເປັນກຸສົນອາໄສສະພາວະທຳທີ່ເປັນກຸສົນເກີດຂຶ້ນ ຍ້ອນອາເສວະນະປັດໄຈ ໄດ້ແກ່ ຂັນ ໓ ອາໄສຂັນ ໑ ທີ່ເປັນກຸສົນເກີດຂຶ້ນ ຂັນ ໑ ອາໄສຂັນ ໓ ເກີດຂຶ້ນ ຂັນ ໒ ອາໄສຂັນ ໒ ເກີດຂຶ້ນ (໑)

ສະພາວະທຳທີ່ເປັນອະກຸສົນ ອາໄສສະພາວະທຳທີ່ເປັນອະກຸສົນເກີດຂຶ້ນ ຍ້ອນອາເສວະນະປັດໄຈ ໄດ້ແກ່ ຂັນ ໓ ອາໄສຂັນ ໑ ທີ່ເປັນອະກຸສົນເກີດຂຶ້ນ ຂັນ ໑ ອາໄສຂັນ ໓ ເກີດຂຶ້ນ ຂັນ ໒ ອາໄສຂັນ ໒ ເກີດຂຶ້ນ (໑)

ສະພາວະທຳທີ່ເປັນອັບພະຍາກະຕະ ອາໄສສະພາວະທຳທີ່ເປັນອັບພະຍາກະຕະເກີດຂຶ້ນ ຍ້ອນອາເສວະນະປັດໄຈ ໄດ້ແກ່ ຂັນ ໓ ອາໄສຂັນ ໑ ທີ່ເປັນອັບພະຍາກະຕະກິຣິຍາເກີດຂຶ້ນ ຂັນ ໑ ອາໄສຂັນ ໓ ເກີດຂຶ້ນ ຂັນ ໒ ອາໄສຂັນ ໒ ເກີດຂຶ້ນ (໑)

## ກຳມະປັດໄຈ

[໖໓] ສະພາວະທຳທີ່ເປັນກຸສົນ ອາໄສສະພາວະທຳທີ່ເປັນກຸສົນເກີດຂຶ້ນຍ້ອນກຳມະປັດໄຈ ໄດ້ແກ່ ຯລຯ ອາໄສຂັນ ໑ ທີ່ເປັນກຸສົນ ຯລຯ ມີ ໓ ວາຣະ

ຯລຯ ອາໄສສະພາວະທຳທີ່ເປັນອະກຸສົນ ຯລຯ ມີ ໓ ວາຣະ

ສະພາວະທຳທີ່ເປັນອັບພະຍາກະຕະ ອາໄສສະພາວະທຳທີ່ເປັນອັບພະຍາກະຕະເກີດຂຶ້ນ ຍ້ອນກຳມະປັດໄຈ ໄດ້ແກ່ ຯລຯ ອາໄສຂັນ ໑ ທີ່ເປັນອັບພະຍາກະຕະວິບາກແລະທີ່ເປັນອັບພະຍາກະຕະກິຣິຍາ ຯລຯ ໃນປະຕິສົນທິຂະນະ ຯລຯ ມະຫາພູຕະຮູບ ໓ ອາໄສມະຫາພູຕະຮູບ ໑ ເກີດຂຶ້ນ ຯລຯ ຈິດຕະສະມຸດຖານຮູບ ແລະກະຕັດຕາຮູບທີ່ເປັນອຸປາທາຍະຮູບອາໄສມະຫາພູຕະຮູບເກີດຂຶ້ນ ສຳລັບເຫຼົ່າອະສັນຍະສັດຕະພົມມະຫາພູຕະຮູບ ໓ ອາໄສມະຫາພູຕະຮູບ ໑ ເກີດຂຶ້ນ ຯລຯ ກະຕັດຕາຮູບທີ່ເປັນອຸປາທາຍະຮູບອາໄສມະຫາພູຕະຮູບເກີດຂຶ້ນ (໑)

ສະພາວະທຳທີ່ເປັນອັບພະຍາກະຕະ ອາໄສສະພາວະທຳທີ່ເປັນກຸສົນແລະທີ່ເປັນອັບພະຍາກະຕະ ເກີດຂຶ້ນຍ້ອນກຳມະປັດໄຈ ໄດ້ແກ່ ຈິດຕະສະມຸດຖານຮູບອາໄສຂັນທີ່ເປັນກຸສົນແລະອາໄສມະຫາພູຕະຮູບເກີດຂຶ້ນ (໑)

ສະພາວະທຳທີ່ເປັນອັບພະຍາກະຕະ ອາໄສສະພາວະທຳທີ່ເປັນອະກຸສົນແລະທີ່ເປັນອັບພະຍາກະຕະເກີດຂຶ້ນຍ້ອນກຳມະປັດໄຈ ໄດ້ແກ່ ຈິດຕະສະມຸດຖານຮູບອາໄສຂັນທີ່ເປັນອະກຸສົນແລະອາໄສມະຫາພູຕະຮູບເກີດຂຶ້ນ (໑)

## ວິປາກະປັດໄຈ

[໖໔] ສະພາວະທຳທີ່ເປັນອັບພະຍາກະຕະ ອາໄສສະພາວະທຳທີ່ເປັນອັບພະຍາກະຕະເກີດຂຶ້ນຍ້ອນວິປາກະປັດໄຈ ໄດ້ແກ່ ຂັນ ໓ ແລະຈິດຕະສະມຸດຖານຮູບອາໄສຂັນ ໑ ທີ່ເປັນອັບພະຍາກະຕະວິບາກເກີດຂຶ້ນ ຂັນ ໑ ແລະຈິດຕະສະມຸດຖານຮູບອາໄສຂັນ ໓ ເກີດຂຶ້ນ ຂັນ ໒ ແລະຈິດຕະສະມຸດຖານຮູບອາໄສຂັນ ໒ ເກີດຂຶ້ນ ໃນປະຕິສົນທິຂະນະ ຂັນ ໓ ແລະກະຕັດຕາຮູບອາໄສຂັນ ໑ ທີ່ເປັນອັບພະຍາກະຕະວິບາກເກີດຂຶ້ນ ຂັນ ໑ ແລະກະຕັດຕາຮູບອາໄສຂັນ ໓ ເກີດຂຶ້ນ ຂັນ ໒ ແລະກະຕັດຕາຮູບອາໄສຂັນ ໒ ເກີດຂຶ້ນ ຫະໄທວັດຖຸອາໄສຂັນເກີດຂຶ້ນ ຂັນອາໄສຫະໄທວັດຖຸເກີດຂຶ້ນ ມະຫາພູຕະຮູບ ໓ ອາໄສມະຫາພູຕະຮູບ ໑ ເກີດຂຶ້ນ ມະຫາພູຕະຮູບ ໑ ອາໄສມະຫາພູຕະຮູບ ໓ ເກີດຂຶ້ນ ມະຫາພູຕະຮູບ ໒ ອາໄສມະຫາພູຕະຮູບ ໒ ເກີດຂຶ້ນ ຈິດຕະສະມຸດຖານຮູບແລະກະຕັດຕາຮູບທີ່ເປັນອຸປາທາຍະຮູບອາໄສມະຫາພູຕະຮູບເກີດຂຶ້ນ (໑)

## ອາຫາຣະປັດໄຈ

[໖໕] ສະພາວະທຳທີ່ເປັນກຸສົນອາໄສສະພາວະທຳທີ່ເປັນກຸສົນເກີດຂຶ້ນຍ້ອນອາຫາຣະປັດໄຈ ໄດ້ແກ່ ຯລຯ ອາໄສຂັນ ໑ ທີ່ເປັນກຸສົນ ຯລຯ ມີ ໓ ວາຣະ

ສະພາວະທຳທີ່ເປັນອະກຸສົນອາໄສສະພາວະທຳທີ່ເປັນອະກຸສົນເກີດຂຶ້ນ ຍ້ອນອາຫາຣະປັດໄຈ ໄດ້ແກ່ ຯລຯ ອາໄສຂັນ ໑ ທີ່ເປັນອະກຸສົນ ຯລຯ ມີ ໓ ວາຣະ

ສະພາວະທຳທີ່ເປັນອັບພະຍາກະຕະ ອາໄສສະພາວະທຳທີ່ເປັນອັບພະຍາກະຕະເກີດຂຶ້ນຍ້ອນອາຫາຣະປັດໄຈ ໄດ້ແກ່ ຯລຯ ອາໄສຂັນ ໑ ທີ່ເປັນອັບພະຍາກະຕະວິບາກແລະທີ່ເປັນອັບພະຍາກະຕະກິຣິຍາ ຯລຯ ໃນປະຕິສົນທິຂະນະ ຯລຯ ມະຫາພູຕະຮູບ ໓ ອາໄສມະຫາພູຕະຮູບ ໑ ເກີດຂຶ້ນ ຯລຯ ຈິດຕະສະມຸດຖານຮູບ ແລະກະຕັດຕາຮູບທີ່ເປັນອຸປາທາຍະຮູບອາໄສມະຫາພູຕະຮູບເກີດຂຶ້ນ ຯລຯ ອາໄສມະຫາພູຕະຮູບ ໑ ທີ່ມີອາຫານເປັນສມຸດຖານ ຯລຯ ອຸປາທາຍະຮູບອາໄສມະຫາພູຕະຮູບເກີດຂຶ້ນ (໑)

ຯລຯ ອາໄສສະພາວະທຳທີ່ເປັນກຸສົນແລະທີ່ເປັນອັບພະຍາກະຕະ ຯລຯ (໑)

ສະພາວະທຳທີ່ເປັນອັບພະຍາກະຕະ ອາໄສສະພາວະທຳທີ່ເປັນອະກຸສົນແລະທີ່ເປັນອັບພະຍາກະຕະ ເກີດຂຶ້ນຍ້ອນອາຫາຣະປັດໄຈ ໄດ້ແກ່ ຈິດຕະສະມຸດຖານຮູບອາໄສຂັນທີ່ເປັນອະກຸສົນ ແລະອາໄສມະຫາພູຕະຮູບເກີດຂຶ້ນ (໑)

## ອິນຊີຍະປັດໄຈ

[໖໖] ສະພາວະທຳທີ່ເປັນກຸສົນອາໄສສະພາວະທຳທີ່ເປັນກຸສົນເກີດຂຶ້ນ ຍ້ອນອິນຊີປັດໄຈ ໄດ້ແກ່ ຯລຯ ອາໄສຂັນ ໑ ທີ່ເປັນກຸສົນ ຯລຯ ມີ ໓ ວາຣະ

ຯລຯ ອາໄສສະພາວະທຳທີ່ເປັນອະກຸສົນ ຯລຯ ມີ ໓ ວາຣະ

ຯລຯ ອາໄສສະພາວະທຳທີ່ເປັນອັບພະຍາກະຕະ ຯລຯ ສຳລັບເຫຼົ່າອະສັນຍະສັດຕະພົມ ຯລຯ ອາໄສມະຫາພູຕະຮູບ ໑ ຯລຯ (ອິນຊີຍະປັດໄຈເໝືອນກັບກຳມະປັດໄຈ)

## ຊານະປັດໄຈແລະມັກຄະປັດໄຈ

[໖໗] ສະພາວະທຳທີ່ເປັນກຸສົນອາໄສສະພາວະທຳທີ່ເປັນກຸສົນເກີດຂຶ້ນ ຍ້ອນຊານະປັດໄຈ ຯລຯ ຍ້ອນມັກຄະປັດໄຈ

(ຊານະປັດໄຈແລະມັກຄະປັດໄຈເໝືອນກັບເຫຕຸປັດໄຈ)

## ສຳປະຍຸດຕະປັດໄຈ

[໖໘] ສະພາວະທຳທີ່ເປັນກຸສົນອາໄສສະພາວະທຳທີ່ເປັນກຸສົນເກີດຂຶ້ນ ຍ້ອນສຳປະຍຸດຕະປັດໄຈ ໄດ້ແກ່ ຯລຯ ອາໄສຂັນ ໑ ທີ່ເປັນກຸສົນ ຯລຯ (ສຳປະຍຸດຕະປັດໄຈເໝືອນກັບອາຣຳມະນະປັດໄຈ)

## ວິບປະຍຸດຕະປັດໄຈ

[໖໙] ສະພາວະທຳທີ່ເປັນກຸສົນ ອາໄສສະພາວະທຳທີ່ເປັນກຸສົນເກີດຂຶ້ນຍ້ອນວິບປະຍຸດຕະປັດໄຈ ໄດ້ແກ່ ຂັນ ໓ ອາໄສຂັນ ໑ ທີ່ເປັນກຸສົນເກີດຂຶ້ນ ຂັນ ໑ ອາໄສຂັນ ໓ ເກີດຂຶ້ນ ຂັນ ໒ ອາໄສຂັນ ໒ ເກີດຂຶ້ນ ຂັນອາໄສຫະໄທວັດຖຸເກີດຂຶ້ນຍ້ອນວິບປະຍຸດຕະປັດໄຈ (໑)

ສະພາວະທຳທີ່ເປັນອັບພະຍາກະຕະ ອາໄສສະພາວະທຳທີ່ເປັນກຸສົນເກີດຂຶ້ນຍ້ອນວິບປະຍຸດຕະປັດໄຈ ໄດ້ແກ່ ຈິດຕະສະມຸດຖານຮູບອາໄສຂັນທີ່ເປັນກຸສົນເກີດຂຶ້ນ ຈິດຕະສະມຸດຖານຮູບອາໄສຂັນເກີດຂຶ້ນຍ້ອນວິບປະຍຸດຕະປັດໄຈ (໒)

ສະພາວະທຳທີ່ເປັນກຸສົນ ແລະທີ່ເປັນອັບພະຍາກະຕະອາໄສສະພາວະທຳທີ່ເປັນກຸສົນເກີດຂຶ້ນຍ້ອນວິບປະຍຸດຕະປັດໄຈ ໄດ້ແກ່ ຂັນ ໓ ແລະຈິດຕະສະມຸດຖານຮູບອາໄສຂັນ ໑ ທີ່ເປັນກຸສົນເກີດຂຶ້ນ ຂັນ ໑ ແລະຈິດຕະສະມຸດຖານຮູບອາໄສຂັນ ໓ ເກີດຂຶ້ນ ຂັນ ໒ ແລະ ຈິດຕະສະມຸດຖານຮູບອາໄສຂັນ ໒ ເກີດຂຶ້ນ ຂັນອາໄສຫະໄທວັດຖຸເກີດຂຶ້ນຍ້ອນວິບປະຍຸດຕະປັດໄຈ ຈິດຕະສະມຸດຖານຮູບອາໄສຂັນເກີດຂຶ້ນຍ້ອນວິບປະຍຸດຕະປັດໄຈ (໓)

ສະພາວະທຳທີ່ເປັນອະກຸສົນ ອາໄສສະພາວະທຳທີ່ເປັນອະກຸສົນເກີດຂຶ້ນຍ້ອນວິບປະຍຸດຕະປັດໄຈ ໄດ້ແກ່ ຂັນ ໓ ອາໄສຂັນ ໑ ທີ່ເປັນອະກຸສົນເກີດຂຶ້ນ ຂັນ ໑ ອາໄສຂັນ ໓ ເກີດຂຶ້ນ ຂັນ ໒ ອາໄສຂັນ ໒ ເກີດຂຶ້ນ ຂັນອາໄສຫະໄທວັດຖຸເກີດຂຶ້ນຍ້ອນວິບປະຍຸດຕະປັດໄຈ (໑)

[໔໑໕] ສະພາວະທຳທີ່ເປັນອະກຸສົນເປັນປັດໄຈແກ່ສະພາວະທຳທີ່ເປັນອະກຸສົນໂດຍອະທິປະຕິປັດໄຈ ມີ ໒ ຢ່າງ ຄື ອາຣຳມະນາທິປະຕິແລະສະຫະຊາຕາທິປະຕິ

ອາຣຳມະນາທິປະຕິ ໄດ້ແກ່ ບຸກຄົນຍິນດີເພີດເພີນຣາຄະໃຫ້ເປັນອາລົມຢ່າງໜັກແໜ້ນ ຍ້ອນເຮັດຄວາມຍິນດີເພີດເພີນຣາຄະນັ້ນໃຫ້ເປັນອາລົມຢ່າງໜັກແໜ້ນ ຣາຄະຈຶ່ງເກີດຂຶ້ນ ທິດຖິຈຶ່ງເກີດຂຶ້ນ ຍິນດີເພີດເພີນທິດຖິໃຫ້ເປັນອາລົມຢ່າງໜັກແໜ້ນ ຍ້ອນເຮັດຄວາມຍິນດີເພີດເພີນທິດຖິນັ້ນໃຫ້ເປັນອາລົມຢ່າງໜັກແໜ້ນ ຣາຄະຈຶ່ງເກີດຂຶ້ນ ທິດຖິຈຶ່ງເກີດຂຶ້ນ

ສະຫະຊາຕາທິປະຕິ ໄດ້ແກ່ ອະທິບໍດີທຳທີ່ເປັນອະກຸສົນເປັນປັດໄຈແກ່ສຳປະຍຸດຕະຂັນໂດຍອະທິປະຕິປັດໄຈ (໑)

ສະພາວະທຳທີ່ເປັນອະກຸສົນເປັນປັດໄຈແກ່ສະພາວະທຳທີ່ເປັນອັບພະຍາກະຕະໂດຍອະທິປະຕິປັດໄຈ ມີຢ່າງດຽວ ຄື ສະຫະຊາຕາທິປະຕິ ໄດ້ແກ່ ອະທິບໍດີທຳທີ່ເປັນອະກຸສົນເປັນປັດໄຈແກ່ ຈິດຕະສະມຸດຖານຮູບໂດຍອະທິປະຕິປັດໄຈ (໒)

ສະພາວະທຳທີ່ເປັນອະກຸສົນເປັນປັດໄຈແກ່ສະພາວະທຳທີ່ເປັນອະກຸສົນແລະທີ່ເປັນອັບພະຍາກະຕະໂດຍອະທິປະຕິປັດໄຈ ມີຢ່າງດຽວ ຄື ສະຫະຊາຕາທິປະຕິ ໄດ້ແກ່ ອະທິບໍດີທຳທີ່ເປັນອະກຸສົນເປັນປັດໄຈແກ່ສຳປະຍຸດຕະຂັນ ແລະຈິດຕະສະມຸດຖານຮູບໂດຍອະທິປະຕິປັດໄຈ (໓)

[໔໑໖] ສະພາວະທຳທີ່ເປັນອັບພະຍາກະຕະເປັນປັດໄຈ ແກ່ສະພາວະທຳທີ່ເປັນອັບພະຍາກະຕະໂດຍອະທິປະຕິປັດໄຈ ມີ ໒ ຢ່າງ ຄື ອາຣຳມະນາທິປະຕິແລະສະຫະຊາຕາທິປະຕິ ອາຣຳມະນາທິປະຕິ ໄດ້ແກ່ ພຣະອະຣະຫັນພິຈາລະນາຜົນໃຫ້ເປັນອາລົມຢ່າງໜັກແໜ້ນ ພິຈາລະນານິບພານໃຫ້ເປັນອາລົມຢ່າງໜັກແໜ້ນ ນິບພານເປັນປັດໄຈແກ່ຜົນໂດຍອະທິປະຕິປັດໄຈ

ສະຫະຊາຕາທິປະຕິ ໄດ້ແກ່ ອະທິບໍດີທຳທີ່ເປັນອັບພະຍາກະຕະວິບາກແລະທີ່ເປັນອັບພະຍາກະຕະ ກິຣິຍາເປັນປັດໄຈແກ່ສຳປະຍຸດຕະຂັນແລະຈິດຕະສະມຸດຖານຮູບໂດຍອະທິປະຕິປັດໄຈ (໑)

ສະພາວະທຳທີ່ເປັນອັບພະຍາກະຕະເປັນປັດໄຈແກ່ສະພາວະທຳທີ່ເປັນກຸສົນໂດຍອະທິປະຕິປັດໄຈ ມີຢ່າງດຽວ ຄື ອາຣຳມະນາທິປະຕິ ໄດ້ແກ່ ພຣະເສຂະພິຈາລະນາຜົນໃຫ້ເປັນອາລົມຢ່າງໜັກແໜ້ນ ພິຈາລະນານິບພານໃຫ້ເປັນອາລົມຢ່າງໜັກແໜ້ນ ນິບພານເປັນປັດໄຈແກ່ໂຄຕະຣະພູໂວທານ ແລະມັກໂດຍອະທິປະຕິປັດໄຈ (໒)

ສະພາວະທຳທີ່ເປັນອັບພະຍາກະຕະເປັນປັດໄຈແກ່ສະພາວະທຳທີ່ເປັນອະກຸສົນໂດຍອະທິປະຕິປັດໄຈ ມີຢ່າງດຽວ ຄື ອາຣຳມະນາທິປະຕິ ໄດ້ແກ່ ບຸກຄົນຍິນດີເພີດເພີນຈັກຂຸໃຫ້

ເປັນອາລົມຢ່າງໜັກແໜ້ນ ຍ້ອນເຮັດຄວາມຍິນດີເພີດເພີນຈັກຂຸນັ້ນໃຫ້ເປັນອາລົມຢ່າງໜັກແໜ້ນ ຣາຄະຈຶ່ງເກີດຂຶ້ນ ທິດຖິຈຶ່ງເກີດຂຶ້ນ ຍິນດີ ເພີດເພີນໂສຕະ ฯລฯ ຄານະ ฯລฯ ຊິວຫາ ฯລฯ ກາຍ ฯລฯ ຮູບ ฯລฯ ສຽງ ฯລฯ ກິ່ນ ฯລฯ ຣົດ ฯລฯ ໂຜດຖັບພະ ฯລฯ ຫະໄທວັດຖຸ ฯລฯ ຂັນທີ່ເປັນອັບພະຍາກະຕະວິບາກແລະທີ່ເປັນອັບພະຍາກະຕະກິຣິຍາໃຫ້ເປັນອາລົມຢ່າງໜັກແໜ້ນ ຍ້ອນເຮັດຄວາມຍິນດີເພີດເພີນໂສຕະເປັນຕົ້ນນັ້ນໃຫ້ເປັນອາລົມຢ່າງໜັກແໜ້ນ ຣາຄະຈຶ່ງເກີດຂຶ້ນ ທິດຖິຈຶ່ງເກີດຂຶ້ນ (໖)

## ອະນັນຕະຣະປັດໄຈ

[໘໑໗] ສະພາວະທຳທີ່ເປັນກຸສົນເປັນປັດໄຈ ແກ່ສະພາວະທຳທີ່ເປັນກຸສົນໂດຍອະນັນຕະຣະປັດໄຈ ໄດ້ແກ່ ຂັນທີ່ເປັນກຸສົນເຊິ່ງເກີດກ່ອນ ໆ ເປັນປັດໄຈແກ່ຂັນທີ່ເປັນກຸສົນເຊິ່ງເກີດຫຼັງ ໆ ໂດຍອະນັນຕະຣະປັດໄຈ ອະນຸໂລມເປັນປັດໄຈແກ່ໂຄຕະຣະພູ ອະນຸໂລມເປັນປັດໄຈແກ່ໂວທານ ໂຄຕະຣະພູເປັນປັດໄຈແກ່ມັກ ໂວທານເປັນປັດໄຈແກ່ມັກໂດຍອະນັນຕະຣະປັດໄຈ (໑)

ສະພາວະທຳທີ່ເປັນກຸສົນເປັນປັດໄຈ ແກ່ສະພາວະທຳທີ່ເປັນອັບພະຍາກະຕະໂດຍອະນັນຕະຣະປັດໄຈ ໄດ້ແກ່ ກຸສົນເປັນປັດໄຈແກ່ວຸດຖານະ ມັກເປັນປັດໄຈແກ່ຜົນ ອະນຸໂລມຂອງພຣະເສຂະເປັນປັດໄຈແກ່ຜົນສະມາບັດ ເນວະສັນຍານາສັນຍາຍະຕະນະກຸສົນຂອງທ່ານຜູ້ອອກຈາກນິໂຣດເປັນປັດໄຈແກ່ຜົນສະມາບັດໂດຍອະນັນຕະຣະປັດໄຈ (໔)

ສະພາວະທຳທີ່ເປັນອະກຸສົນເປັນປັດໄຈແກ່ສະພາວະທຳທີ່ເປັນອະກຸສົນໂດຍອະນັນຕະຣະປັດໄຈ ໄດ້ແກ່ ຂັນທີ່ເປັນອະກຸສົນເຊິ່ງເກີດກ່ອນ ໆ ເປັນປັດໄຈແກ່ຂັນທີ່ເປັນອະກຸສົນເຊິ່ງເກີດຫຼັງ ໆ ໂດຍອະນັນຕະຣະປັດໄຈ (໑)

ສະພາວະທຳທີ່ເປັນອະກຸສົນເປັນປັດໄຈແກ່ສະພາວະທຳທີ່ເປັນອັບພະຍາກະຕະໂດຍອະນັນຕະຣະປັດໄຈ ໄດ້ແກ່ ອະກຸສົນເປັນປັດໄຈແກ່ວຸດຖານະໂດຍອະນັນຕະຣະປັດໄຈ (໔)

ສະພາວະທຳທີ່ເປັນອັບພະຍາກະຕະເປັນປັດໄຈແກ່ສະພາວະທຳທີ່ເປັນອັບພະຍາກະຕະໂດຍອະນັນຕະຣະປັດໄຈ ໄດ້ແກ່ ຂັນທີ່ເປັນອັບພະຍາກະຕະວິບາກແລະທີ່ເປັນອັບພະຍາກະຕະກິຣິຍາເຊິ່ງເກີດກ່ອນ ໆ ເປັນປັດໄຈແກ່ຂັນທີ່ເປັນອັບພະຍາກະຕະວິບາກແລະທີ່ເປັນອັບພະຍາກະຕະກິຣິຍາເຊິ່ງເກີດຫຼັງ ໆ ໂດຍອະນັນຕະຣະປັດໄຈ ພະວັງຄະຈິດເປັນປັດໄຈແກ່ອາວັດຊະນະຈິດ ກິຣິຍາເປັນປັດໄຈແກ່ວຸດຖານະ ອະນຸໂລມຂອງພຣະອະຣະຫັນເປັນປັດໄຈແກ່ຜົນສະມາບັດ ເນວະສັນຍານາສັນຍາ ຍະຕະນະກິຣິຍາຂອງທ່ານຜູ້ອອກຈາກນິໂຣດເປັນປັດໄຈແກ່ຜົນສະມາບັດໂດຍອະນັນຕະຣະປັດໄຈ (໑)

ສະພາວະທຳທີ່ເປັນອັບພະຍາກະຕະເປັນປັດໄຈແກ່ສະພາວະທຳທີ່ເປັນກຸສົນໂດຍອະນັນຕະຣະປັດໄຈ ໄດ້ແກ່ ອາວັດຊະນະຈິດເປັນປັດໄຈແກ່ຂັນທີ່ເປັນກຸສົນໂດຍອະນັນຕະຣະປັດໄຈ (໔)

ສະພາວະທຳທີ່ເປັນອັບພະຍາກະຕະເປັນປັດໄຈແກ່ສະພາວະທຳທີ່ເປັນອະກຸສົນໂດຍອະນັນຕະຣະປັດໄຈ ໄດ້ແກ່ ອາວັດຊະນະຈິດເປັນປັດໄຈແກ່ຂັນທີ່ເປັນອະກຸສົນໂດຍອະນັນຕະຣະປັດໄຈ (໕)

## ສະມະນັນຕະຣະປັດໄຈ

[໔໑໗] ສະພາວະທຳທີ່ເປັນກຸສົນເປັນປັດໄຈແກ່ສະພາວະທຳທີ່ເປັນກຸສົນໂດຍສະມະນັນຕະຣະປັດໄຈ ໄດ້ແກ່ ຂັນທີ່ເປັນກຸສົນເຊິ່ງເກີດກ່ອນ ໆ ເປັນປັດໄຈແກ່ຂັນທີ່ເປັນກຸສົນເຊິ່ງເກີດຫຼັງ ໆ ໂດຍສະມະນັນຕະຣະປັດໄຈອະນຸໂລມເປັນປັດໄຈແກ່ໂຄຕະຣະພູ ອະນຸໂລມເປັນປັດໄຈແກ່ໂວທານ ໂຄຕະຣະພູເປັນປັດໄຈແກ່ມັກ ໂວທານເປັນປັດໄຈແກ່ມັກໂດຍສະມະນັນຕະຣະປັດໄຈ (໑)

ສະພາວະທຳທີ່ເປັນກຸສົນເປັນປັດໄຈແກ່ສະພາວະທຳທີ່ເປັນອັບພະຍາກະຕະໂດຍສະມະນັນຕະຣະປັດໄຈ ໄດ້ແກ່ ກຸສົນເປັນປັດໄຈແກ່ວຸດຖານະ ມັກເປັນປັດໄຈແກ່ຜົນ ອະນຸໂລມຂອງພຣະເສຂະເປັນປັດໄຈແກ່ຜົນສະມາບັດ ເນວະສັນຍານາສັນຍາຍະຕະນະກຸສົນຂອງທ່ານຜູ້ອອກຈາກນິໂຣດເປັນປັດໄຈແກ່ຜົນສະມາບັດໂດຍສະມະນັນຕະຣະປັດໄຈ (໔)

ສະພາວະທຳທີ່ເປັນອະກຸສົນເປັນປັດໄຈແກ່ສະພາວະທຳທີ່ເປັນອະກຸສົນໂດຍສະມະນັນຕະຣະປັດໄຈ ໄດ້ແກ່ ຂັນທີ່ເປັນອະກຸສົນເຊິ່ງເກີດກ່ອນ ໆ ເປັນປັດໄຈແກ່ຂັນທີ່ເປັນອະກຸສົນເຊິ່ງເກີດຫຼັງ ໆ ໂດຍສະມະນັນຕະຣະປັດໄຈ (໑)

ສະພາວະທຳທີ່ເປັນອະກຸສົນເປັນປັດໄຈແກ່ສະພາວະທຳທີ່ເປັນອັບພະຍາກະຕະໂດຍສະມະນັນຕະຣະປັດໄຈ ໄດ້ແກ່ ອະກຸສົນເປັນປັດໄຈແກ່ວຸດຖານະໂດຍສະມະນັນຕະຣະປັດໄຈ (໔)

ສະພາວະທຳທີ່ເປັນອັບພະຍາກະຕະເປັນປັດໄຈແກ່ສະພາວະທຳທີ່ເປັນອັບພະຍາກະຕະໂດຍ ສະມະນັນຕະຣະປັດໄຈ ໄດ້ແກ່ ຂັນທີ່ເປັນອັບພະຍາກະຕະວິບາກແລະທີ່ເປັນອັບພະຍາກະຕະກິຣິຍາເຊິ່ງເກີດກ່ອນ ໆ ເປັນປັດໄຈແກ່ຂັນທີ່ເປັນອັບພະຍາກະຕະວິບາກແລະທີ່ເປັນອັບພະຍາກະຕະກິຣິຍາເຊິ່ງເກີດຫຼັງ ໆ ໂດຍສະມະນັນຕະຣະປັດໄຈ ພະວັງຄະຈິດເປັນປັດໄຈແກ່ອາວັດຊະນະຈິດ ກິຣິຍາເປັນປັດໄຈແກ່ວຸດຖານະ ອະນຸໂລມຂອງພຣະອະຣະຫັນເປັນປັດໄຈແກ່ຜົນສະມາບັດ ເນວະສັນຍານາສັນຍາຍະຕະນະ ກິຣິຍາຂອງທ່ານຜູ້ອອກຈາກນິໂຣດເປັນປັດໄຈແກ່ຜົນສະມາບັດໂດຍສະມະນັນຕະຣະປັດໄຈ (໑)

ສະພາວະທຳທີ່ເປັນອັບພະຍາກະຕະເປັນປັດໄຈແກ່ສະພາວະທຳທີ່ເປັນກຸສົນໂດຍສະມະນັນຕະຣະປັດໄຈ ໄດ້ແກ່ ອາວັດຊະນະຈິດເປັນປັດໄຈແກ່ຂັນທີ່ເປັນກຸສົນໂດຍສະມະນັນຕະຣະປັດໄຈ (໔)

ສະພາວະທຳທີ່ເປັນອັບພະຍາກະຕະເປັນປັດໄຈແກ່ສະພາວະທຳທີ່ເປັນອະກຸສົນໂດຍສະມະນັນຕະຣະປັດໄຈ ໄດ້ແກ່ ອາວັດຊະນະຈິດເປັນປັດໄຈແກ່ຂັນທີ່ເປັນອະກຸສົນໂດຍສະມະນັນຕະຣະປັດໄຈ (໕)

## ສະຫະຊາຕະປັດໄຈ

[໔໑໗] ສະພາວະທຳທີ່ເປັນກຸສົນເປັນປັດໄຈແກ່ສະພາວະທຳທີ່ເປັນກຸສົນໂດຍສະຫະຊາຕະປັດໄຈ ໄດ້ແກ່ ຂັນ ໑ ທີ່ເປັນກຸສົນເປັນປັດໄຈແກ່ຂັນ ໓ ໂດຍສະຫະຊາຕະປັດໄຈ ຂັນ ໓ ເປັນປັດໄຈແກ່ຂັນ ໑ ໂດຍສະຫະຊາຕະປັດໄຈ ຂັນ ໒ ເປັນປັດໄຈແກ່ຂັນ ໒ ໂດຍສະຫະຊາຕະປັດໄຈ (໑)

ສະພາວະທຳທີ່ເປັນກຸສົນເປັນປັດໄຈແກ່ສະພາວະທຳທີ່ເປັນອັບພະຍາກະຕະໂດຍສະຫະຊາຕະປັດໄຈ ໄດ້ແກ່ ຂັນທີ່ເປັນກຸສົນເປັນປັດໄຈແກ່ຈິດຕະສະມຸດຖານຮູບໂດຍສະຫະຊາຕະປັດໄຈ (໒)

ສະພາວະທຳທີ່ເປັນກຸສົນເປັນປັດໄຈແກ່ສະພາວະທຳທີ່ເປັນກຸສົນແລະທີ່ເປັນອັບພະຍາກະຕະໂດຍສະຫະຊາຕະປັດໄຈ ໄດ້ແກ່ ຂັນ ໑ ທີ່ເປັນກຸສົນເປັນປັດໄຈແກ່ຂັນ ໓ ແລະຈິດຕະສະມຸດຖານຮູບໂດຍສະຫະຊາຕະປັດໄຈ ຂັນ ໓ ເປັນປັດໄຈແກ່ຂັນ ໑ ແລະຈິດຕະສະມຸດຖານຮູບ ໂດຍສະຫະຊາຕະປັດໄຈ ຂັນ ໒ ເປັນປັດໄຈແກ່ຂັນ ໒ ແລະຈິດຕະສະມຸດຖານຮູບໂດຍສະຫະຊາຕະປັດໄຈ (໓)

ສະພາວະທຳທີ່ເປັນອະກຸສົນເປັນປັດໄຈແກ່ສະພາວະທຳທີ່ເປັນອະກຸສົນໂດຍສະຫະຊາຕະປັດໄຈ ໄດ້ແກ່ ຂັນ ໑ ທີ່ເປັນອະກຸສົນເປັນປັດໄຈແກ່ຂັນ ໓ ໂດຍສະຫະຊາຕະປັດໄຈ ຂັນ ໓ ເປັນປັດໄຈແກ່ຂັນ ໑ ໂດຍສະຫະຊາຕະປັດໄຈ ຂັນ ໒ ເປັນປັດໄຈແກ່ຂັນ ໒ ໂດຍສະຫະຊາຕະປັດໄຈ (໑)

ສະພາວະທຳທີ່ເປັນອະກຸສົນເປັນປັດໄຈແກ່ສະພາວະທຳທີ່ເປັນອັບພະຍາກະຕະໂດຍສະຫະຊາຕະປັດໄຈ ໄດ້ແກ່ ຂັນທີ່ເປັນອະກຸສົນເປັນປັດໄຈແກ່ຈິດຕະສະມຸດຖານຮູບໂດຍສະຫະຊາຕະປັດໄຈ (໒)

ສະພາວະທຳທີ່ເປັນອະກຸສົນເປັນປັດໄຈແກ່ສະພາວະທຳທີ່ເປັນອະກຸສົນແລະທີ່ເປັນອັບພະຍາກະຕະ ໂດຍສະຫະຊາຕະປັດໄຈ ໄດ້ແກ່ ຂັນ ໑ ທີ່ເປັນອະກຸສົນເປັນປັດໄຈແກ່ຂັນ ໓

ແລະຈິດຕະສະມຸດຖານຮູບໂດຍສະຫະຊາຕະປັດໄຈ ຂັນ ໓ ເປັນປັດໄຈແກ່ຂັນ ໑ ແລະຈິດຕະສະມຸດຖານຮູບໂດຍສະຫະຊາຕະປັດໄຈ ຂັນ ໒ ເປັນປັດໄຈແກ່ຂັນ ໒ ແລະຈິດຕະສະມຸດຖານຮູບໂດຍ ສະຫະຊາຕະປັດໄຈ (໓)

ສະພາວະທຳທີ່ເປັນອັບພະຍາກະຕະເປັນປັດໄຈແກ່ສະພາວະທຳທີ່ເປັນອັບພະຍາກະຕະໂດຍສະຫະຊາຕະປັດໄຈ ໄດ້ແກ່ ຂັນ ໑ ທີ່ເປັນອັບພະຍາກະຕະວິບາກແລະທີ່ເປັນອັບພະຍາກະຕະກິຣິຍາເປັນປັດໄຈແກ່ ຂັນ ໓ ແລະຈິດຕະສະມຸດຖານຮູບໂດຍສະຫະຊາຕະປັດໄຈ ຂັນ ໓ ເປັນປັດໄຈແກ່ຂັນ ໑

ແລະຈິດຕະສະມຸດຖານຮູບໂດຍສະຫະຊາຕະປັດໄຈ ຂັນ ໒ ເປັນປັດໄຈແກ່ຂັນ ໒ ແລະຈິດຕະສະມຸດຖານຮູບໂດຍສະຫະຊາຕະປັດໄຈ ໃນປະຕິສົນທິຂະນະ ຂັນ ໑ ທີ່ເປັນອັບພະຍາກະຕະວິບາກເປັນປັດໄຈແກ່ຂັນ ໓ ແລະກະຕັດຕາຮູບໂດຍສະຫະຊາຕະປັດໄຈ ຂັນ ໓ ເປັນປັດໄຈແກ່ຂັນ ໑ ແລະກະຕັດຕາຮູບໂດຍສະຫະຊາຕະປັດໄຈ ຂັນ ໒ ເປັນປັດໄຈແກ່ຂັນ ໒ ແລະກະຕັດຕາຮູບໂດຍສະຫະຊາຕະປັດໄຈ ຂັນເປັນປັດໄຈແກ່ຫະໄທວັດຖຸໂດຍສະຫະຊາຕະປັດໄຈ ຫະໄທວັດຖຸເປັນປັດໄຈ ແກ່ຂັນໂດຍສະຫະຊາຕະປັດໄຈ ມະຫາພູຕະຮູບ ໑ ເປັນປັດໄຈແກ່ມະຫາພູຕະຮູບ ໓ ໂດຍສະຫະຊາຕະປັດໄຈ ມະຫາພູຕະຮູບ ໓ ເປັນປັດໄຈແກ່ມະຫາພູຕະຮູບ ໑ ໂດຍສະຫະຊາຕະປັດໄຈ ມະຫາພູຕະຮູບ ໒ ເປັນປັດໄຈແກ່ມະຫາພູຕະຮູບ ໒ ໂດຍສະຫະຊາຕະປັດໄຈ ມະຫາພູຕະຮູບເປັນປັດໄຈແກ່ຈິດຕະສະມຸດຖານ ຮູບແລະກະຕັດຕາຮູບທີ່ເປັນອຸປາທາຍະຮູບໂດຍສະຫະຊາຕະປັດໄຈ ມະຫາພູຕະຮູບ ໑ ທີ່ເປັນພາຍນອກເປັນປັດໄຈແກ່ມະຫາພູຕະຮູບ ໓ ໂດຍສະຫະຊາຕະປັດໄຈ ມະຫາພູຕະຮູບ ໓ ເປັນປັດໄຈແກ່ມະຫາພູຕະຮູບ ໑ ໂດຍສະຫະຊາຕະປັດໄຈ ມະຫາພູຕະຮູບ ໒ ເປັນປັດໄຈແກ່ມະຫາພູຕະຮູບ ໒ ໂດຍສະຫະຊາຕະປັດໄຈ ມະຫາພູຕະຮູບເປັນປັດໄຈແກ່ອຸປາທາຍະຮູບໂດຍສະຫະຊາຕະປັດໄຈ ມະຫາພູຕະຮູບ ໑ ທີ່ມີອາຫານເປັນສະມຸດຖານເປັນປັດໄຈແກ່ມະຫາພູຕະຮູບ ໓ ໂດຍສະຫະຊາຕະປັດໄຈ ມະຫາພູຕະຮູບ ໓ ເປັນປັດໄຈແກ່ມະຫາພູຕະຮູບ ໑ ໂດຍສະຫະຊາຕະປັດໄຈ ມະຫາພູຕະຮູບ ໒ ເປັນປັດໄຈແກ່ມະຫາພູຕະຮູບ ໒ ໂດຍ ສະຫະຊາຕະປັດໄຈ ມະຫາພູຕະຮູບເປັນປັດໄຈແກ່ອຸປາທາຍະຮູບໂດຍສະຫະຊາຕະປັດໄຈ ມະຫາພູຕະຮູບ ໑ ທີ່ມີອຸຕຸເປັນສະມຸດຖານເປັນປັດໄຈ ແກ່ມະຫາພູຕະຮູບ ໓ ໂດຍສະຫະຊາຕະປັດໄຈ ມະຫາພູຕະຮູບ ໓ ເປັນປັດໄຈແກ່ມະຫາພູຕະຮູບ ໑ ໂດຍສະຫະຊາຕະປັດໄຈ ມະຫາພູຕະຮູບ ໒ ເປັນປັດໄຈແກ່ມະຫາພູຕະຮູບ ໒ ໂດຍສະຫະຊາຕະປັດໄຈ ມະຫາພູຕະຮູບເປັນປັດໄຈແກ່ອຸປາທາຍະຮູບໂດຍສະຫະຊາຕະປັດໄຈ ສຳລັບເຫຼົ່າອະສັນຍະສັດຕະພົມ ມະຫາພູຕະຮູບ ໑ ເປັນປັດໄຈແກ່ມະຫາພູຕະຮູບ ໓ ໂດຍສະຫະຊາຕະປັດໄຈ ມະຫາພູຕະຮູບ ໓ ເປັນປັດໄຈແກ່ມະຫາພູຕະຮູບ ໑ ໂດຍສະຫະຊາຕະປັດ

ໄຈ ມະຫາພູຕະຮູບ ໔ ເປັນປັດໄຈແກ່ມະຫາພູຕະຮູບ ໔ ໂດຍສະຫະຊາຕະປັດໄຈ ມະຫາພູຕະຮູບເປັນປັດໄຈແກ່ກະຕັດຕາຮູບທີ່ເປັນອຸປາທາຍະຮູບໂດຍສະຫະຊາຕະປັດໄຈ (໑)

ສະພາວະທຳທີ່ເປັນກຸສົນ ແລະທີ່ເປັນອັບພະຍາກະຕະເປັນປັດໄຈແກ່ສະພາວະທຳທີ່ເປັນອັບພະຍາກະຕະໂດຍສະຫະຊາຕະປັດໄຈ ໄດ້ແກ່ ຂັນທີ່ເປັນກຸສົນແລະມະຫາພູຕະຮູບເປັນປັດໄຈແກ່ ຈິດຕະສະມຸດຖານຮູບໂດຍສະຫະຊາຕະປັດໄຈ (໑)

ສະພາວະທຳທີ່ເປັນອະກຸສົນແລະທີ່ເປັນອັບພະຍາກະຕະເປັນປັດໄຈແກ່ສະພາວະທຳທີ່ເປັນອັບພະຍາກະຕະໂດຍສະຫະຊາຕະປັດໄຈ ໄດ້ແກ່ ຂັນທີ່ເປັນອະກຸສົນແລະມະຫາພູຕະຮູບເປັນປັດໄຈແກ່ຈິດຕະສະມຸດຖານຮູບໂດຍສະຫະຊາຕະປັດໄຈ (໑)

## ອັນຍະມັນຍະປັດໄຈ

[໔໔໐] ສະພາວະທຳທີ່ເປັນກຸສົນເປັນປັດໄຈແກ່ສະພາວະທຳທີ່ເປັນກຸສົນໂດຍອັນຍະມັນຍະປັດໄຈ ໄດ້ແກ່ ຂັນ ໑ ທີ່ເປັນກຸສົນເປັນປັດໄຈແກ່ຂັນ ໓ ໂດຍອັນຍະມັນຍະປັດໄຈ ຂັນ ໓ ເປັນປັດໄຈແກ່ຂັນ ໑ ໂດຍອັນຍະມັນຍະປັດໄຈ ຂັນ ໒ ເປັນປັດໄຈແກ່ຂັນ ໒ ໂດຍອັນຍະມັນຍະປັດໄຈ (໑)

ສະພາວະທຳທີ່ເປັນອະກຸສົນເປັນປັດໄຈແກ່ສະພາວະທຳທີ່ເປັນອະກຸສົນໂດຍອັນຍະມັນຍະປັດໄຈ ໄດ້ແກ່ ຂັນ ໑ ທີ່ເປັນອະກຸສົນເປັນປັດໄຈແກ່ຂັນ ໓ ໂດຍອັນຍະມັນຍະປັດໄຈ ຂັນ ໓ ເປັນປັດໄຈແກ່ຂັນ ໑ ໂດຍອັນຍະມັນຍະປັດໄຈ ຂັນ ໒ ເປັນປັດໄຈແກ່ຂັນ ໒ ໂດຍອັນຍະມັນຍະປັດໄຈ (໑)

ສະພາວະທຳທີ່ເປັນອັບພະຍາກະຕະເປັນປັດໄຈແກ່ສະພາວະທຳທີ່ເປັນອັບພະຍາກະຕະໂດຍອັນຍະມັນຍະປັດໄຈ ໄດ້ແກ່ ຂັນ ໑ ທີ່ເປັນອັບພະຍາກະຕະວິບາກແລະທີ່ເປັນອັບພະຍາກະຕະກິຣິຍາເປັນປັດໄຈ ແກ່ຂັນ ໓ ໂດຍອັນຍະມັນຍະປັດໄຈ ຂັນ ໓ ເປັນປັດໄຈແກ່ຂັນ ໑ ໂດຍອັນຍະມັນຍະປັດໄຈ ຂັນ ໒ ເປັນປັດໄຈແກ່ຂັນ ໒ ໂດຍອັນຍະມັນຍະປັດໄຈ ໃນປະຕິສົນທິຂະນະ ຂັນ ໑ ທີ່ເປັນອັບພະຍາກະຕະວິບາກເປັນປັດໄຈແກ່ຂັນ ໓ ແລະຫະໄທວັດຖຸໂດຍອັນຍະມັນຍະປັດໄຈ ຂັນ ໓ ເປັນປັດໄຈແກ່ຂັນ ໑ ແລະຫະໄທວັດຖຸໂດຍອັນຍະມັນຍະປັດໄຈ ຂັນ ໒ ເປັນປັດໄຈແກ່ຂັນ ໒ ແລະຫະໄທວັດຖຸໂດຍອັນຍະມັນຍະປັດໄຈ ຂັນເປັນປັດໄຈແກ່ຫະໄທວັດຖຸໂດຍອັນຍະມັນຍະປັດໄຈ ຫະໄທວັດຖຸເປັນປັດໄຈແກ່ຂັນໂດຍອັນຍະມັນຍະປັດໄຈ ມະຫາພູຕະຮູບ ໑ ເປັນປັດໄຈແກ່ມະຫາພູຕະຮູບ ໓ ໂດຍອັນຍະມັນຍະປັດໄຈ ມະຫາພູຕະຮູບ ໓ ເປັນປັດໄຈແກ່ມະຫາພູຕະຮູບ ໑ ໂດຍອັນຍະມັນຍະປັດໄຈ ມະຫາພູຕະຮູບ ໒ ເປັນປັດໄຈແກ່ມະຫາພູຕະຮູບ ໒ ໂດຍອັນຍະມັນຍະປັດໄຈ ຯລຯ ທີ່ເປັນພາຍນອກ ຯລຯ ທີ່ມີອາຫານ

ເປັນສະມຸດຖານ ໗ລ໗ ທີ່ມີອຸຕຸເປັນສະມຸດຖານ ໗ລ໗ ສຳລັບເຫຼົ່າອະສັນຍະສັດຕະພົມ ມະຫາພູຕະຣູບ ໑ ເປັນປັດໄຈແກ່ມະຫາພູຕະຣູບ ໓ ໂດຍອັນຍະມັນຍະປັດໄຈ ມະຫາພູຕະຣູບ ໓ ເປັນປັດໄຈແກ່ມະຫາພູຕະຣູບ ໑ ໂດຍອັນຍະມັນຍະປັດໄຈ ໗ລ໗ ມະຫາພູຕະຣູບ ໒ ເປັນປັດໄຈແກ່ມະຫາພູຕະຣູບ ໒ ໂດຍອັນຍະມັນຍະປັດໄຈ (໑)

## ນິດສະຍະປັດໄຈ

[໔໒໑] ສະພາວະທຳທີ່ເປັນກຸສົນເປັນປັດໄຈແກ່ສະພາວະທຳທີ່ເປັນກຸສົນໂດຍນິດສະຍະປັດໄຈ ໄດ້ແກ່ ຂັນ ໑ ທີ່ເປັນກຸສົນເປັນປັດໄຈແກ່ຂັນ ໓ ໂດຍນິດສະຍະປັດໄຈ ຂັນ ໓ ເປັນປັດໄຈແກ່ຂັນ ໑ ໂດຍນິດສະຍະປັດໄຈ ຂັນ ໒ ເປັນປັດໄຈແກ່ຂັນ ໒ ໂດຍນິດສະຍະປັດໄຈ (໑)

ສະພາວະທຳທີ່ເປັນກຸສົນເປັນປັດໄຈແກ່ສະພາວະທຳທີ່ເປັນອັບພະຍາກະຕະໂດຍນິດສະຍະປັດໄຈ ໄດ້ແກ່ ຂັນທີ່ເປັນກຸສົນເປັນປັດໄຈແກ່ຈິດຕະສະມຸດຖານຣູບໂດຍນິດສະຍະປັດໄຈ (໒)

ສະພາວະທຳທີ່ເປັນກຸສົນເປັນປັດໄຈແກ່ສະພາວະທຳທີ່ເປັນກຸສົນແລະທີ່ເປັນອັບພະຍາກະຕະໂດຍນິດສະຍະປັດໄຈ ໄດ້ແກ່ຂັນ ໑ ທີ່ເປັນກຸສົນເປັນປັດໄຈແກ່ຂັນ ໓ ແລະຈິດຕະສະມຸດຖານຣູບໂດຍນິດສະຍະປັດໄຈ ຂັນ ໓ ເປັນປັດໄຈແກ່ຂັນ ໑ ແລະຈິດຕະສະມຸດຖານຣູບໂດຍນິດສະຍະປັດໄຈ ຂັນ ໒ ເປັນປັດໄຈແກ່ຂັນ ໒ ແລະຈິດຕະສະມຸດຖານຣູບໂດຍນິດສະຍະປັດໄຈ (໓)

ສະພາວະທຳທີ່ເປັນອະກຸສົນເປັນປັດໄຈແກ່ສະພາວະທຳທີ່ເປັນອະກຸສົນໂດຍນິດສະຍະປັດໄຈ ໄດ້ແກ່ ຂັນ ໑ ທີ່ເປັນອະກຸສົນເປັນປັດໄຈແກ່ຂັນ ໓ ໂດຍນິດສະຍະປັດໄຈ ຂັນ ໓ ເປັນປັດໄຈແກ່ຂັນ ໑ ໂດຍນິດສະຍະປັດໄຈ ຂັນ ໒ ເປັນປັດໄຈແກ່ຂັນ ໒ ໂດຍນິດສະຍະປັດໄຈ (໑)

ສະພາວະທຳທີ່ເປັນອະກຸສົນເປັນປັດໄຈແກ່ສະພາວະທຳທີ່ເປັນອັບພະຍາກະຕະໂດຍນິດສະຍະປັດໄຈ ໄດ້ແກ່ ຂັນທີ່ເປັນອະກຸສົນເປັນປັດໄຈແກ່ຈິດຕະສະມຸດຖານຣູບໂດຍນິດສະຍະປັດໄຈ (໒)

ສະພາວະທຳທີ່ເປັນອະກຸສົນເປັນປັດໄຈແກ່ສະພາວະທຳທີ່ເປັນອະກຸສົນແລະທີ່ເປັນອັບພະຍາກະຕະ ໂດຍນິດສະຍະປັດໄຈ ໄດ້ແກ່ ຂັນ ໑ ທີ່ເປັນອະກຸສົນເປັນປັດໄຈແກ່ຂັນ ໓ ແລະຈິດຕະສະມຸດຖານຣູບໂດຍນິດສະຍະປັດໄຈ ຂັນ ໓ ເປັນປັດໄຈແກ່ຂັນ ໑ ແລະຈິດຕະສະມຸດຖານຣູບໂດຍນິດສະຍະປັດໄຈ ຂັນ ໒ ເປັນປັດໄຈແກ່ຂັນ ໒ ແລະຈິດຕະສະມຸດຖານຣູບໂດຍນິດສະຍະປັດໄຈ (໓)

ສະພາວະທຳທີ່ເປັນອັບພະຍາກະຕະເປັນປັດໄຈແກ່ສະພາວະທຳທີ່ເປັນອັບພະຍາກະຕະ ໂດຍນິດສະຍະປັດໄຈ ໄດ້ແກ່ ຂັນ ໑ ທີ່ເປັນອັບພະຍາກະຕະວິບາກແລະທີ່ເປັນອັບພະຍາກະຕະກິຣິຍາເປັນປັດໄຈແກ່ຂັນ ໓ ແລະຈິດຕະສະມຸດຖານຮູບໂດຍນິດສະຍະປັດໄຈ ຂັນ ໓ ເປັນປັດໄຈແກ່ຂັນ ໑ ແລະຈິດຕະສະມຸດຖານຮູບໂດຍນິດສະຍະປັດໄຈ ຂັນ ໔ ເປັນປັດໄຈແກ່ຂັນ ໔ ແລະຈິດຕະສະມຸດຖານຮູບໂດຍນິດສະຍະປັດໄຈ ໃນປະຕິສົນທິຂະນະ ຂັນ ໑ ທີ່ເປັນອັບພະຍາກະຕະວິບາກເປັນປັດໄຈແກ່ຂັນ ໓ ແລະກະຕັດຕາຮູບໂດຍນິດສະຍະປັດໄຈ ຂັນ ໓ ເປັນປັດໄຈແກ່ຂັນ ໑ ແລະກະຕັດຕາຮູບໂດຍນິດສະຍະປັດໄຈ ຂັນ ໔ ເປັນປັດໄຈແກ່ຂັນ ໔ ແລະກະຕັດຕາຮູບໂດຍນິດສະຍະປັດໄຈ ຂັນເປັນປັດໄຈແກ່ຫະໄທວັດຖຸໂດຍນິດສະຍະປັດໄຈ ຫະໄທວັດຖຸເປັນປັດໄຈແກ່ຂັນ ໂດຍນິດສະຍະປັດໄຈ ມະຫາພູຕະຮູບ ໑ ເປັນປັດໄຈແກ່ມະຫາພູຕະຮູບ ໓ ໂດຍນິດສະຍະປັດໄຈ ມະຫາພູຕະຮູບ ໓ ເປັນປັດໄຈແກ່ມະຫາພູຕະຮູບ ໑ ໂດຍນິດສະຍະປັດໄຈ ມະຫາພູຕະຮູບ ໔ ເປັນ ປັດໄຈແກ່ມະຫາພູຕະຮູບ ໔ ໂດຍນິດສະຍະປັດໄຈ ມະຫາພູຕະຮູບເປັນປັດໄຈແກ່ຈິດຕະສະມຸດຖານຮູບ ແລະກະຕັດຕາຮູບທີ່ເປັນອຸປາທາຍະຮູບໂດຍນິດສະຍະປັດໄຈ ຯລຯ ທີ່ເປັນພາຍນອກ ຯລຯ ທີ່ມີອາຫານ ເປັນສະມຸດຖານ ຯລຯ ທີ່ມີອຸຕຸເປັນສະມຸດຖານ ຯລຯ ສຳລັບເຫຼົ່າອະສັນຍະສັດຕະພົມ ມະຫາພູຕະຮູບ ໑ ເປັນປັດໄຈແກ່ມະຫາພູຕະຮູບ ໓ ໂດຍນິດສະຍະປັດໄຈ ມະຫາພູຕະຮູບ ໓ ເປັນປັດໄຈແກ່ມະຫາພູຕະຮູບ ໑ ໂດຍນິດສະຍະປັດໄຈ ມະຫາພູຕະຮູບ ໔ ເປັນປັດໄຈແກ່ມະຫາພູຕະຮູບ ໔ ໂດຍນິດສະຍະປັດໄຈ ມະຫາພູຕະຮູບເປັນປັດໄຈແກ່ກະຕັດຕາຮູບ ທີ່ເປັນອຸປາທາຍະຮູບໂດຍນິດສະຍະປັດໄຈ ຈັກຂາຍະຕະນະເປັນປັດໄຈແກ່ຈັກຂຸວິນຍານໂດຍນິດສະຍະປັດໄຈ ໂສຕາຍະຕະນະ ຯລຯ ຄານາຍະຕະນະ ຯລຯ ຊິວຫາຍະຕະນະ ຯລຯ ກາຍາຍະຕະນະເປັນປັດໄຈແກ່ກາຍະວິນຍານໂດຍນິດສະຍະປັດໄຈ ຫະໄທວັດຖຸເປັນປັດໄຈແກ່ຂັນທີ່ເປັນອັບພະຍາກະຕະວິບາກແລະທີ່ເປັນອັບພະຍາກະຕະກິຣິຍາໂດຍນິດສະຍະປັດໄຈ (໑)

ສະພາວະທຳທີ່ເປັນອັບພະຍາກະຕະເປັນປັດໄຈແກ່ສະພາວະທຳທີ່ເປັນກຸສົນໂດຍນິດສະຍະປັດໄຈ ໄດ້ແກ່ ຫະໄທວັດຖຸເປັນປັດໄຈແກ່ຂັນທີ່ເປັນກຸສົນໂດຍນິດສະຍະປັດໄຈ (໔)

ສະພາວະທຳທີ່ເປັນອັບພະຍາກະຕະເປັນປັດໄຈແກ່ສະພາວະທຳທີ່ເປັນອະກຸສົນໂດຍນິດສະຍະປັດໄຈ ໄດ້ແກ່ ຫະໄທວັດຖຸເປັນປັດໄຈແກ່ຂັນທີ່ເປັນອະກຸສົນໂດຍນິດສະຍະປັດໄຈ (໓)

[໔໔໔] ສະພາວະທຳທີ່ເປັນກຸສົນແລະທີ່ເປັນອັບພະຍາກະຕະເປັນປັດໄຈແກ່ສະພາວະທຳທີ່ເປັນກຸສົນໂດຍນິດສະຍະປັດໄຈ ໄດ້ແກ່ ຂັນ ໑ ທີ່ເປັນກຸສົນແລະຫະໄທວັດຖຸເປັນປັດໄຈແກ່ຂັນ ໓ ໂດຍນິດສະຍະປັດໄຈ ຂັນ ໓ ແລະຫະໄທວັດຖຸເປັນປັດໄຈແກ່ຂັນ ໑ ໂດຍນິດສະຍະປັດໄຈ ຂັນ ໔ ແລະຫະໄທວັດຖຸເປັນປັດໄຈແກ່ຂັນ ໔ ໂດຍນິດສະຍະປັດໄຈ (໑)

ສະພາວະທຳທີ່ເປັນກຸສົນ ແລະທີ່ເປັນອັບພະຍາກະຕະເປັນປັດໄຈແກ່ສະພາວະທຳທີ່ເປັນອັບພະຍາກະຕະໂດຍນິດສະຍະປັດໄຈ ໄດ້ແກ່ ຂັນທີ່ເປັນກຸສົນແລະມະຫາພູຕະຮູບເປັນປັດໄຈແກ່ຈິດຕະສະມຸດຖານຮູບໂດຍນິດສະຍະປັດໄຈ (໔)

ສະພາວະທຳທີ່ເປັນອະກຸສົນແລະທີ່ເປັນອັບພະຍາກະຕະເປັນປັດໄຈແກ່ສະພາວະທຳທີ່ເປັນອະກຸສົນ ໂດຍນິດສະຍະປັດໄຈ ໄດ້ແກ່ ຂັນ ໑ ທີ່ເປັນອະກຸສົນແລະຫະໄທວັດຖຸເປັນປັດໄຈແກ່ຂັນ ໓ ໂດຍນິດສະຍະປັດໄຈ ຂັນ ໓ ແລະຫະໄທວັດຖຸເປັນປັດໄຈແກ່ຂັນ ໑ ໂດຍນິດສະຍະປັດໄຈ ຂັນ ໔ ແລະຫະໄທວັດຖຸເປັນປັດໄຈແກ່ຂັນ ໔ ໂດຍນິດສະຍະປັດໄຈ (໑)

ສະພາວະທຳທີ່ເປັນອະກຸສົນ ແລະທີ່ເປັນອັບພະຍາກະຕະເປັນປັດໄຈແກ່ສະພາວະທຳທີ່ເປັນອັບພະຍາກະຕະໂດຍນິດສະຍະປັດໄຈ ໄດ້ແກ່ ຂັນທີ່ເປັນອະກຸສົນແລະມະຫາພູຕະຮູບເປັນປັດໄຈແກ່ ຈິດຕະສະມຸດຖານຮູບໂດຍນິດສະຍະປັດໄຈ (໔)

## ອຸປະນິດສະຍະປັດໄຈ

[໔໔໓] ສະພາວະທຳທີ່ເປັນກຸສົນເປັນປັດໄຈແກ່ສະພາວະທຳທີ່ເປັນກຸສົນໂດຍອຸປະນິດສະຍະປັດໄຈ ມີ ໓ ຢ່າງ ຄື ອາຣຳມະນູປະນິດສະຍະ ອະນັນຕະຣູປະນິດສະຍະ ແລະປະກະຕູປະນິດສະຍະ

ອາຣຳມະນູປະນິດສະຍະ ໄດ້ແກ່ ບຸກຄົນໃຫ້ທານ ສະມາທານສິນ ຮັກສາອຸໂປສົດແລ້ວພິຈາລະນາກຸສົນນັ້ນໃຫ້ເປັນອາລົມຢ່າງໜັກແໜ້ນ ພິຈາລະນາກຸສົນທີ່ເຄີຍສັ່ງສົມໄວ້ດີແລ້ວໃຫ້ເປັນອາລົມຢ່າງໜັກແໜ້ນ ອອກຈາກຊານແລ້ວພິຈາລະນາຊານໃຫ້ເປັນອາລົມຢ່າງໜັກແໜ້ນ ພຣະເສຂະພິຈາລະນາໂຄຕະຣະພູໃຫ້ເປັນອາລົມຢ່າງໜັກແໜ້ນ ພິຈາລະນາໂວທານໃຫ້ເປັນອາລົມຢ່າງໜັກແໜ້ນ ອອກຈາກມັກແລ້ວພິຈາລະນາມັກໃຫ້ເປັນອາລົມຢ່າງໜັກແໜ້ນ

ອະນັນຕະຣູປະນິດສະຍະ ໄດ້ແກ່ ຂັນທີ່ເປັນກຸສົນເຊິ່ງເກີດກ່ອນ ໆ ເປັນປັດໄຈແກ່ຂັນທີ່ເປັນກຸສົນເຊິ່ງເກີດຫຼັງ ໆ ໂດຍອຸປະນິດສະຍະປັດໄຈ ອະນຸໂລມເປັນປັດໄຈແກ່ໂຄຕະຣະພູ ອະນຸໂລມເປັນປັດໄຈແກ່ໂວທານ ໂຄຕະຣະພູເປັນປັດໄຈແກ່ມັກໂວທານເປັນປັດໄຈແກ່ມັກໂດຍອຸປະນິດສະຍະປັດໄຈ

ປະກະຕູປະນິດສະຍະ ໄດ້ແກ່ ບຸກຄົນອາໄສສັດທາແລ້ວໃຫ້ທານ ສະມາທານສິນ ຮັກສາອຸໂປສົດ ເຮັດຊານໃຫ້ເກີດຂຶ້ນ ເຮັດວິປັດສະນາໃຫ້ເກີດຂຶ້ນ ເຮັດມັກໃຫ້ເກີດຂຶ້ນ ເຮັດອະພິນຍາໃຫ້ເກີດຂຶ້ນ ເຮັດສະມາບັດໃຫ້ເກີດຂຶ້ນ ອາໄສສິນ ຯລຯ ສຸຕະ ຯລຯ ຈາຄະ ຯລຯ ປັນຍາແລ້ວໃຫ້ທານ ສະມາທານສິນ ຮັກສາອຸໂປສົດ ເຮັດຊານໃຫ້ເກີດຂຶ້ນ ເຮັດວິປັດສະນາໃຫ້

ເກີດຂຶ້ນ ເຮັດມັກໃຫ້ເກີດຂຶ້ນ ເຮັດອະພິນຍາໃຫ້ເກີດຂຶ້ນ ເຮັດສະມາບັດໃຫ້ເກີດຂຶ້ນ ສັດທາ ฯລฯ ສີນ ฯລฯ ສຸຕະ ฯລฯ ຈາຄະ ฯລฯ ປັນຍາເປັນປັດໄຈແກ່ສັດທາ ฯລฯ ສີນ ฯລฯ ສຸຕະ ฯລฯ ຈາຄະ ฯລฯ ປັນຍາໂດຍອຸປະນິດສະຍະປັດໄຈ

ບໍຣິກຳປະຖົມຊານເປັນປັດໄຈແກ່ປະຖົມຊານໂດຍອຸປະນິດສະຍະປັດໄຈ ບໍຣິກຳທຸຕິຍະຊານເປັນປັດໄຈແກ່ທຸຕິຍະຊານໂດຍອຸປະນິດສະຍະປັດໄຈ ບໍຣິກຳຕະຕິຍະຊານເປັນປັດໄຈແກ່ຕະຕິຍະຊານໂດຍອຸປະນິດສະຍະປັດໄຈ ບໍຣິກຳຈະຕຸດຖະຊານເປັນປັດໄຈແກ່ຈະຕຸດຖະຊານໂດຍ ອຸປະນິດສະຍະປັດໄຈ ບໍຣິກຳອາກາສານັນຈາຍະຕະນະເປັນປັດໄຈແກ່ອາກາສານັນຈາຍະຕະນະໂດຍອຸປະນິດສະຍະປັດໄຈ ບໍຣິກຳວິນຍານັນຈາຍະຕະນະເປັນປັດໄຈແກ່ວິນຍານັນຈາຍະຕະນະໂດຍອຸປະນິດສະຍະປັດໄຈ ບໍຣິກຳອາກິນຈັນຍາຍະຕະນະເປັນປັດໄຈແກ່ອາກິນຈັນຍາຍະຕະນະໂດຍອຸປະນິດສະຍະປັດໄຈ ບໍຣິກຳເນວະສັນຍານາສັນຍາຍະຕະນະເປັນປັດໄຈແກ່ເນວະສັນຍານາສັນຍາຍະຕະນະໂດຍເປັນອຸປະນິດສະຍະປັດໄຈ ປະຖົມຊານເປັນປັດໄຈແກ່ທຸຕິຍະຊານໂດຍ ອຸປະນິດສະຍະປັດໄຈ ฯລฯ ຈະຕຸດຖະຊານເປັນປັດໄຈແກ່ອາກາສານັນຈາຍະຕະນະໂດຍອຸປະນິດສະຍະປັດໄຈ ອາກາສານັນຈາຍະຕະນະເປັນປັດໄຈແກ່ວິນຍານັນຈາຍະຕະນະ ฯລฯ ວິນຍານັນຈາຍະຕະນະ ເປັນປັດໄຈແກ່ອາກິນຈັນຍາຍະຕະນະ ฯລฯ ອາກິນຈັນຍາຍະຕະນະເປັນປັດໄຈແກ່ເນວະສັນຍາ ນາສັນຍາຍະຕະນະໂດຍອຸປະນິດສະຍະປັດໄຈ

ບໍຣິກຳທິບພະຈັກຂຸເປັນປັດໄຈແກ່ທິບພະຈັກຂຸໂດຍອຸປະນິດສະຍະປັດໄຈ ບໍຣິກຳທິບພະໂສຕະທາດເປັນປັດໄຈແກ່ທິບພະໂສຕະທາດໂດຍອຸປະນິດສະຍະປັດໄຈ ບໍຣິກຳອິດທິວິທະຍານເປັນປັດໄຈແກ່ອິດທິວິທະຍານໂດຍອຸປະນິດສະຍະປັດໄຈ ບໍຣິກຳເຈໂຕປະຣິຍະຍານເປັນປັດໄຈແກ່ເຈໂຕປະຣິຍະຍານໂດຍອຸປະນິດສະຍະປັດໄຈ ບໍຣິກຳປຸບເພນິວາສານຸດສະຕິຍານເປັນປັດໄຈແກ່ປຸບເພນິວາສານຸດສະຕິຍານໂດຍອຸປະນິດສະຍະປັດໄຈ ບໍຣິກຳຍະຖາກຳມູປະຄະຍານເປັນປັດໄຈແກ່ຍະຖາກຳມູປະຄະຍານໂດຍອຸປະນິດສະຍະປັດໄຈ ບໍຣິກຳອະນາຄະຕັງສະຍານເປັນປັດໄຈແກ່ອະນາຄະຕັງສະຍານໂດຍອຸປະນິດສະຍະປັດໄຈ

ທິບພະຈັກຂຸເປັນປັດໄຈແກ່ທິບພະໂສຕະທາດໂດຍອຸປະນິດສະຍະປັດໄຈ ທິບພະໂສຕະທາດເປັນປັດໄຈແກ່ອິດທິວິທະຍານໂດຍອຸປະນິດສະຍະປັດໄຈ ອິດທິວິທະຍານເປັນປັດໄຈແກ່ເຈໂຕປະຣິຍະຍານໂດຍອຸປະນິດສະຍະປັດໄຈ ເຈໂຕປະຣິຍະຍານເປັນປັດໄຈແກ່ປຸບເພນິວາສານຸດສະຕິຍານໂດຍອຸປະນິດສະຍະປັດໄຈ ປຸບເພນິວາສານຸດສະຕິຍານເປັນປັດໄຈແກ່ຍະຖາກຳມູປະຄະຍານໂດຍ ອຸປະນິດສະຍະປັດໄຈ ຍະຖາກຳມູປະຄະຍານເປັນປັດໄຈແກ່ອະນາຄະຕັງສະຍານໂດຍອຸປະນິດສະຍະປັດໄຈ ບໍຣິກຳປະຖົມມັກເປັນປັດໄຈແກ່ປະຖົມມັກໂດຍອຸປະນິດສະຍະປັດໄຈ ບໍຣິກຳທຸຕິຍະມັກເປັນປັດໄຈແກ່ທຸຕິຍະມັກໂດຍອຸປະນິດສະຍະປັດໄຈ ບໍຣິກຳຕະຕິຍະມັກເປັນປັດໄຈແກ່ຕະຕິຍະມັກ ໂດຍອຸປະນິດສະຍະປັດໄຈ ບໍຣິກຳຈະຕຸດຖະມັກເປັນປັດໄຈແກ່ຈະຕຸດຖະມັກ

ໂດຍອຸປະນິດສະຍະປັດໄຈ ປະຖົມມັກເປັນປັດໄຈແກ່ທຸຕິຍະມັກໂດຍອຸປະນິດສະຍະປັດໄຈ ທຸຕິຍະມັກເປັນປັດໄຈແກ່ຕະຕິຍະມັກໂດຍອຸປະນິດສະຍະປັດໄຈ ຕະຕິຍະມັກເປັນປັດໄຈແກ່ຈະຕຸດຖະມັກໂດຍອຸປະນິດສະຍະປັດໄຈ ພຣະເສຂະອາໄສມັກເຮັດສະມາບັດທີ່ຍັງບໍ່ເກີດໃຫ້ເກີດຂຶ້ນເຂົ້າສະມາບັດທີ່ເກີດຂຶ້ນແລ້ວ ເຫັນແຈ້ງສັງຂານໂດຍເປັນສະພາວະບໍ່ທ່ຽງ ເປັນທຸກ ເປັນອະນັດຕາ ມັກຂອງພຣະເສຂະເປັນປັດໄຈແກ່ອັດຖະປະຕິສຳພິທາ ທຳມະປະຕິສຳພິທາ ນິຣຸດຕິປະຕິສຳພິທາ ປະຕິພານະປະຕິສຳພິທາແລະຄວາມເປັນຜູ້ສະຫຼາດໃນຖານະແລະບໍ່ແມ່ນຖານະໂດຍອຸປະນິດສະຍະປັດໄຈ (໑)

ສະພາວະທຳທີ່ເປັນກຸສົນເປັນປັດໄຈແກ່ສະພາວະທຳທີ່ເປັນອະກຸສົນໂດຍອຸປະນິດສະຍະປັດໄຈ ມີ ໒ ຢ່າງ ຄື ອາຣຳມະນູປະນິດສະຍະແລະປະກະຕູປະນິດສະຍະ

ອາຣຳມະນູປະນິດສະຍະ ໄດ້ແກ່ ບຸກຄົນໃຫ້ທານ ສະມາທານສິນ ຮັກສາອຸໂປສົດແລ້ວຍິນດີເພີດເພີນກຸສົນນັ້ນໃຫ້ເປັນອາລົມຢ່າງໜັກແໜ້ນ ຍ້ອນເຮັດຄວາມຍິນດີເພີດເພີນກຸສົນນັ້ນໃຫ້ເປັນອາລົມຢ່າງໜັກແໜ້ນ ຣາຄະຈຶ່ງເກີດຂຶ້ນ ທິດຖິຈຶ່ງເກີດຂຶ້ນ ຍ້ອນຍິນດີເພີດເພີນກຸສົນທີ່ເຄີຍສັ່ງສົມໄວ້ດີແລ້ວໃຫ້ເປັນອາລົມຢ່າງໜັກແໜ້ນ ຍ້ອນເຮັດຄວາມຍິນດີເພີດເພີນກຸສົນນັ້ນໃຫ້ເປັນອາລົມຢ່າງໜັກແໜ້ນ ຣາຄະຈຶ່ງເກີດຂຶ້ນ ທິດຖິຈຶ່ງເກີດຂຶ້ນ ບຸກຄົນອອກຈາກຊານແລ້ວຍິນດີເພີດເພີນຊານໃຫ້ເປັນອາລົມຢ່າງໜັກແໜ້ນແລ້ວ ຍ້ອນເຮັດຄວາມຍິນດີເພີດເພີນຊານນັ້ນໃຫ້ເປັນອາລົມຢ່າງໜັກແໜ້ນ ຣາຄະຈຶ່ງເກີດຂຶ້ນ ທິດຖິຈຶ່ງເກີດຂຶ້ນ

ປະກະຕູປະນິດສະຍະ ໄດ້ແກ່ ບຸກຄົນອາໄສສັດທາແລ້ວມີມານະ ຖືທິດຖິ ອາໄສສິນ ฯລฯ ສຸຕະ ฯລฯ ຈາຄະ ฯລฯ ປັນຍາແລ້ວມີມານະ ຖືທິດຖິ ສັດທາ ฯລฯ ສິນ ฯລฯ ສຸຕະ ฯລฯ ຈາຄະ ฯລฯ ປັນຍາເປັນປັດໄຈແກ່ຣາຄະ ฯລฯ ໂທສະ ฯລฯ ໂມຫະ ฯລฯ ມານະ ฯລฯ ທິດຖິ ฯລฯ ຄວາມປາຖະໜາໂດຍອຸປະນິດສະຍະປັດໄຈ (໔)

ສະພາວະທຳທີ່ເປັນກຸສົນເປັນປັດໄຈແກ່ສະພາວະທຳທີ່ເປັນອັບພະຍາກະຕະໂດຍອຸປະນິດສະຍະປັດໄຈ ມີ ໓ ຢ່າງ ຄື ອາຣຳມະນູປະນິດສະຍະ ອະນັນຕະຣູປະນິດສະຍະແລະປະກະຕູປະນິດສະຍະ

ອາຣຳມະນູປະນິດສະຍະ ໄດ້ແກ່ ພຣະອະຣະຫັນອອກຈາກມັກແລ້ວພິຈາລະນາມັກໃຫ້ເປັນອາລົມຢ່າງໜັກແໜ້ນ

ອະນັນຕະຣູປະນິດສະຍະ ໄດ້ແກ່ ກຸສົນເປັນປັດໄຈແກ່ວຸດຖານະ ມັກເປັນປັດໄຈແກ່ຜົນ ອະນຸໂລມຂອງພຣະເສຂະເປັນປັດໄຈແກ່ຜົນສະມາບັດ ເນວະສັນຍານາສັນຍາຍະຕະນະກຸສົນຂອງທ່ານຜູ້ອອກຈາກນິໂຣດເປັນປັດໄຈແກ່ຜົນສະມາບັດໂດຍອຸປະນິດສະຍະປັດໄຈ

ປະກະຕູປະນິດສະຍະ ໄດ້ແກ່ ບຸກຄົນອາໄສສັດທາແລ້ວເຮັດຕົນໃຫ້ເດືອດຮ້ອນ ໃຫ້ຮ້ອນຮົນ ສະເຫວີຍທຸກມີການສະແຫວງຫາເປັນມູນ ອາໄສສີນ ໆລໆ ສຸຕະ ໆລໆ ຈາຄະ ໆລໆ ປັນຍາ ແລ້ວເຮັດຕົນໃຫ້ເດືອດຮ້ອນ ໃຫ້ຮ້ອນຮົນ ສະເຫວີຍທຸກມີການສະແຫວງຫາເປັນມູນ ສັດທາ ໆລໆ ສີນ ໆລໆ ສຸຕະ ໆລໆ ຈາຄະ ໆລໆ ປັນຍາເປັນປັດໄຈແກ່ສຸກທາງກາຍ ທຸກທາງກາຍແລະຜົນສະມາບັດ ໂດຍອຸປະນິດສະຍະປັດໄຈ ກຳທີ່ເປັນກຸສົນເປັນປັດໄຈແກ່ວິບາກໂດຍອຸປະນິດສະຍະປັດໄຈ ພຣະອະຣະຫັນອາໄສມັກແລ້ວເຮັດກິຣິຍາສະມາບັດທີ່ຍັງບໍ່ເກີດໃຫ້ເກີດຂຶ້ນເຂົ້າກິຣິຍາສະມາບັດທີ່ເກີດຂຶ້ນແລ້ວເຫັນແຈ້ງສັງຂານໂດຍເປັນສະພາວະບໍ່ທ່ຽງ ເປັນທຸກ ເປັນອະນັດຕາ ມັກຂອງພຣະອະຣະຫັນເປັນປັດໄຈແກ່ອັດຖະປະຕິສຳພິທາ ທຳມະປະຕິສຳພິທາ ນິຣຸດຕິປະຕິສຳພິທາ ປະຕິພານະປະຕິສຳພິທາ ແລະຄວາມເປັນຜູ້ສະຫຼາດໃນຖານະແລະບໍ່ແມ່ນຖານະໂດຍອຸປະນິດສະຍະປັດໄຈ ມັກເປັນປັດໄຈແກ່ຜົນສະມາບັດໂດຍອຸປະນິດສະຍະປັດໄຈ (໓)

ສະພາວະທຳທີ່ເປັນອະກຸສົນເປັນປັດໄຈແກ່ສະພາວະທຳທີ່ເປັນອະກຸສົນໂດຍອຸປະນິດສະຍະປັດໄຈ ມີ ໓ ຢ່າງ ຄື ອາຣຳມະນູປະນິດສະຍະ ອະນັນຕະຣູປະນິດສະຍະແລະປະກະຕູປະນິດສະຍະ

ອາຣຳມະນູປະນິດສະຍະ ໄດ້ແກ່ ບຸກຄົນຍິນດີເພີດເພີນຣາຄະໃຫ້ເປັນອາລົມຢ່າງໜັກແໜ້ນ ຍ້ອນເຮັດຄວາມຍິນດີເພີດເພີນຣາຄະນັ້ນໃຫ້ເປັນອາລົມຢ່າງໜັກແໜ້ນ ຣາຄະຈຶ່ງເກີດຂຶ້ນ ທິດຖິຈຶ່ງເກີດຂຶ້ນ ຍິນດີເພີດເພີນທິດຖິໃຫ້ເປັນອາລົມຢ່າງໜັກແໜ້ນ ຍ້ອນເຮັດຄວາມຍິນດີເພີດເພີນທິດຖິນັ້ນໃຫ້ເປັນອາລົມຢ່າງໜັກແໜ້ນ ຣາຄະຈຶ່ງເກີດຂຶ້ນ ທິດຖິຈຶ່ງເກີດຂຶ້ນ

ອະນັນຕະຣູປະນິດສະຍະ ໄດ້ແກ່ ຂັນທີ່ເປັນອະກຸສົນເຊິ່ງເກີດກ່ອນ ໆ ເປັນປັດໄຈແກ່ຂັນທີ່ເປັນອະກຸສົນເຊິ່ງເກີດຫຼັງ ໆ ໂດຍອຸປະນິດສະຍະປັດໄຈ

ປະກະຕູປະນິດສະຍະ ໄດ້ແກ່ ບຸກຄົນອາໄສຣາຄະແລ້ວຂ້າສັດ ລັກຊັບ ເວົ້າຕົວະ ເວົ້າສັບສໍ່ ເວົ້າຄຳຫຍາບ ເວົ້າໂລເລ ງັດແງະ ປຸ້ນບໍ່ໃຫ້ເຫຼືອ ປຸ້ນເຮືອນຫຼັງດຽວ ດັກຈີ້ຢູ່ທາງປ່ຽວ ລ່ວງເກີນພັນລະຍາຜູ້ອື່ນ ຂ້າຊາວບ້ານ ຂ້າຊາວນິຄົມ ຂ້າມານດາ ຂ້າບິດາ ຂ້າພຣະອະຣະຫັນ ມີຈິດປະທຸດສະຮ້າຍເຮັດພຣະໂລຫິດຂອງພຣະຕະຖາຄົດເຈົ້າໃຫ້ຫໍ້ ທຳລາຍສົງໃຫ້ແຕກກັນ ອາໄສໂທສະ ໆລໆ ໂມຫະ ໆລໆ ມານະ ໆລໆ ທິດຖິ ໆລໆ ຄວາມປາຖະໜາ ແລ້ວຂ້າສັດໆລໆ ທຳລາຍສົງໃຫ້ແຕກກັນ ຣາຄະ ໆລໆ ໂທສະ ໆລໆ ໂມຫະ ໆລໆ ມານະ ໆລໆ ທິດຖິ ໆລໆ ຄວາມປາຖະໜາເປັນປັດໄຈແກ່ຣາຄະ ໆລໆ ໂທສະ ໆລໆ ໂມຫະ ໆລໆ ມານະ ໆລໆ ທິດຖິ ໆລໆ ຄວາມປາຖະໜາໂດຍອຸປະນິດສະຍະປັດໄຈ

ປານາຕິບາດເປັນປັດໄຈແກ່ປານາຕິບາດໂດຍອຸປະນິດສະຍະປັດໄຈ ປານາຕິບາດເປັນປັດໄຈແກ່ອະທິນນາທານ ຯລຯ ກາເມສຸມິດສາຈານ ຯລຯ ມຸສາວາດ ຯລຯ ປິສຸນາວາຈາ ຯລຯ ຜະຣຸສະວາຈາ ຯລຯ ສຳຜັບປະລາປະ ຯລຯ ອະພິດຊາ ຯລຯ ພະຍາບາດ ຯລຯ ມິດສາທິດຖິໂດຍອຸປະນິດສະຍະປັດໄຈ ອະທິນນາທານເປັນປັດໄຈແກ່ອະທິນນາທານ ຯລຯ ກາເມສຸມິດສາຈານ ຯລຯ ມຸສາວາດ ຯລຯ (ຫຍໍ້) ມິດສາທິດຖິ ຯລຯ ປານາຕິບາດໂດຍອຸປະນິດສະຍະປັດໄຈ (ເພິ່ງຜູກໃຫ້ເປັນຈັກກະໄນ)

ກາເມສຸມິດສາຈານ ຯລຯ ມຸສາວາດ ຯລຯ ປິສຸນາວາຈາ ຯລຯ ຜະຣຸສະວາຈາ ຯລຯ ສຳຜັບປະລາປະ ຯລຯ ອະພິດຊາ ຯລຯ ພະຍາບາດ ຯລຯ ມິດສາທິດຖິເປັນປັດໄຈແກ່ມິດສາທິດຖິໂດຍອຸປະນິດສະຍະປັດໄຈ ມິດສາທິດຖິເປັນປັດໄຈແກ່ປານາຕິປາຕະ ຯລຯ ອະທິນນາທານ ຯລຯ ກາເມສຸມິດສາຈານ ຯລຯ ມຸສາວາດ ຯລຯ ປິສຸນາວາຈາ ຯລຯ ຜະຣຸສະວາຈາ ຯລຯ ສຳຜັບປະລາປະ ຯລຯ ອະພິດຊາ ຯລຯ ພະຍາບາດໂດຍອຸປະນິດສະຍະປັດໄຈ

ມາຕຸຄາຕະກຳເປັນປັດໄຈແກ່ມາຕຸຄາຕະກຳໂດຍອຸປະນິດສະຍະປັດໄຈ ມາຕຸຄາຕະກຳເປັນປັດໄຈແກ່ປິຕຸຄາຕະກຳ ຯລຯ ອະຣະຫັນຕະຄາຕະກຳ ຯລຯ ໂລຫິຕຸບປາທະກຳ ຯລຯ ສັງຄະເພທະກຳ ຯລຯ ນິຍະຕະມິດສາທິດຖິໂດຍອຸປະນິດສະຍະປັດໄຈ ປິຕຸຄາຕະກຳເປັນປັດໄຈແກ່ປິຕຸຄາຕະກຳ ຯລຯ ອະຣະຫັນຕະຄາຕະກຳ ຯລຯ ໂລຫິຕຸບປາທະກຳ ຯລຯ ສັງຄະເພທະກຳ ຯລຯ ນິຍະຕະມິດສາທິດຖິ ຯລຯ ມາຕຸຄາຕະກຳໂດຍອຸປະນິດສະຍະປັດໄຈ

ອະຣະຫັນຕະຄາຕະກຳເປັນປັດໄຈແກ່ອະຣະຫັນຕະຄາຕະກຳ ຯລຯ ໂລຫິຕຸປປາທະກຳ ຯລຯ ໂລຫິຕຸປປາທະກຳເປັນປັດໄຈແກ່ໂລຫິຕຸປປາທະກຳ ຯລຯ ສັງຄະເພດກຳເປັນປັດໄຈແກ່ສັງຄະເພດກຳ ຯລຯ ນິຍະຕະມິດສາທິດຖິເປັນປັດໄຈແກ່ນິຍະຕະມິດສາທິດຖິໂດຍອຸປະນິດສະຍະປັດໄຈ ນິຍະຕະມິດສາທິດຖິເປັນປັດໄຈແກ່ມາຕຸຄາຕະກຳໂດຍອຸປະນິດສະຍະປັດໄຈ ຯລຯ ເປັນປັດໄຈແກ່ປິຕຸຄາຕະກຳ ຯລຯ ອະຣະຫັນຕະຄາຕະກຳ ຯລຯ ໂລຫິຕຸບປາທະກຳ ຯລຯ ສັງຄະເພທະກຳໂດຍອຸປະນິດສະຍະປັດໄຈ (ເພິ່ງເຮັດໃຫ້ເປັນຈັກກະໄນ) (໑)

ສະພາວະທຳທີ່ເປັນອະກຸສົນເປັນປັດໄຈແກ່ສະພາວະທຳທີ່ເປັນກຸສົນໂດຍອຸປະນິດສະຍະປັດໄຈ ມີຢ່າງດຽວ ຄື ປະກະຕູປະນິດສະຍະ ໄດ້ແກ່ ບຸກຄົນອາໄສຣາຄະແລ້ວຈຶ່ງໃຫ້ທານ ສະມາທານສິນ ຮັກສາອຸໂປສົດ ເຮັດຊານໃຫ້ເກີດຂຶ້ນ ເຮັດວິປັດສະນາໃຫ້ເກີດຂຶ້ນ ເຮັດມັກໃຫ້ເກີດຂຶ້ນ ເຮັດອະພິນຍາໃຫ້ເກີດຂຶ້ນ ເຮັດສະມາບັດໃຫ້ເກີດຂຶ້ນ ອາໄສໂທສະ ຯລຯ ໂມຫະ ຯລຯ ມານະ ຯລຯ ທິດຖິ ຯລຯ ຄວາມປາຖະໜາຈຶ່ງໃຫ້ທານ ສະມາທານສິນ ຮັກສາອຸໂບສົດ ເຮັດຊານໃຫ້ເກີດຂຶ້ນ ເຮັດວິປັດສະນາໃຫ້ເກີດຂຶ້ນ ເຮັດມັກໃຫ້ເກີດຂຶ້ນ ເຮັດອະພິນຍາໃຫ້ເກີດຂຶ້ນ ເຮັດສະມາບັດໃຫ້ເກີດຂຶ້ນ ຣາຄະ ຯລຯ ໂທສະ ຯລຯ ໂມຫະ ຯລຯ ມານະ ຯລຯ ທິດຖິ

ໆລໆ ຄວາມປາຖະໜາເປັນປັດໄຈແກ່ສັດທາ ໆລໆ ສີນ ໆລໆ ສຸຕະ ໆລໆ ຈາຄະ ໆລໆ ປັນຍາໂດຍອຸປະນິດສະຍະປັດໄຈ ບຸກຄົນຂ້າສັດແລ້ວປະສົງຈະລົບລ້າງປານາຕິບາດກຳນັ້ນ ຈຶ່ງໃຫ້ທານ ສະມາທານສີນ ຮັກສາອຸໂປສົດ ເຮັດຊານໃຫ້ເກີດຂຶ້ນ ເຮັດວິປັດສະນາໃຫ້ເກີດຂຶ້ນ ເຮັດມັກໃຫ້ເກີດຂຶ້ນ ເຮັດອະພິນຍາໃຫ້ເກີດຂຶ້ນ ເຮັດສະມາບັດໃຫ້ເກີດຂຶ້ນ ບຸກຄົນລັກຊັບ ເວົ້າຕົວະ ໆລໆ ເວົ້າສັບສໍ່ ໆລໆ ເວົ້າຄຳຫຍາບ ໆລໆ ເວົ້າໂລເລ ໆລໆ ງັດແງະ ໆລໆ ປຸ້ນບໍ່ໃຫ້ເຫຼືອ ໆລໆ ປຸ້ນເຮືອນຫຼັງດຽວ ໆລໆ ດັກຈີ້ຢູ່ທາງປ່ຽວ ໆລໆ ລ່ວງເກີນພັນລະຍາຜູ້ອື່ນ ໆລໆ ຂ້າຊາວບ້ານ ໆລໆ ຂ້າຊາວນິຄົມ ປະສົງຈະລົບລ້າງກຳຊົ່ວນັ້ນ ຈຶ່ງໃຫ້ທານ ສະມາທານສີນ ຮັກສາອຸໂປສົດ ເຮັດຊານໃຫ້ເກີດຂຶ້ນ ເຮັດວິປັດສະນາໃຫ້ເກີດຂຶ້ນ ເຮັດມັກໃຫ້ເກີດຂຶ້ນ ເຮັດອະພິນຍາໃຫ້ເກີດຂຶ້ນ ເຮັດສະມາບັດໃຫ້ເກີດຂຶ້ນ ຂ້າມານດາ ປະສົງຈະລົບລ້າງມາຕຸຄາຕະກຳນັ້ນ ຈຶ່ງໃຫ້ທານ ສະມາທານສີນ ຮັກສາອຸໂປສົດ ຂ້າບິດາ ໆລໆ ຂ້າພຣະອະຣະຫັນ ໆລໆ ມີຈິດປະທຸດສະຮ້າຍເຮັດພຣະໂລຫິດຂອງພຣະຕະຖາຄົດເຈົ້າໃຫ້ຫໍ້ ໆລໆ ທຳລາຍສົງໃຫ້ແຕກກັນ ປະສົງຈະລົບລ້າງສັງຄະເພທະກຳນັ້ນ ຈຶ່ງໃຫ້ທານ ສະມາທານສີນ ຮັກສາອຸໂປສົດ (໔)

ສະພາວະທຳທີ່ເປັນອະກຸສົນເປັນປັດໄຈແກ່ສະພາວະທຳທີ່ເປັນອັບພະຍາ**ກ**ະຕະໂດຍອຸປະນິດສະຍະປັດໄຈ ມີ ໔ ຢ່າງ ຄື ອະນັນຕະຣູປະນິດສະຍະແລະປະກະຕູປະນິດສະຍະ

ອະນັນຕະຣູປະນິດສະຍະ ໄດ້ແກ່ ອະກຸສົນເປັນປັດໄຈແກ່ວຸດຖານະໂດຍອຸປະນິດສະຍະປັດໄຈ

ປະກະຕູປະນິດສະຍະ ໄດ້ແກ່ ບຸກຄົນອາໄສຣາຄະແລ້ວເຮັດຕົນໃຫ້ເດືອດຮ້ອນໃຫ້ຮ້ອນຮົນສະເຫວີຍທຸກມີການສະແຫວງຫາເປັນມູນ ອາໄສໂທສະ ໆລໆ ໂມຫະ ໆລໆ ມານະ ໆລໆ ທິດຖິ ໆລໆ ຄວາມປາຖະໜາ ເຮັດຕົນໃຫ້ເດືອດຮ້ອນໃຫ້ຮ້ອນຮົນ ສະເຫວີຍທຸກມີການສະແຫວງຫາເປັນມູນ ຣາຄະ ໆລໆ ໂທສະ ໆລໆ ໂມຫະ ໆລໆ ມານະ ໆລໆ ທິດຖິ ໆລໆ ຄວາມປາຖະໜາເປັນປັດໄຈແກ່ສຸກທາງກາຍ ທຸກທາງກາຍແລະຜົນສະມາບັດໂດຍອຸປະນິດສະຍະປັດໄຈ ກຳທີ່ເປັນອະກຸສົນເປັນປັດໄຈແກ່ວິບາກໂດຍອຸປະນິດສະຍະປັດໄຈ (໓)

ສະພາວະທຳທີ່ເປັນອັບພະຍາກະຕະເປັນປັດໄຈແກ່ສະພາວະທຳທີ່ເປັນອັບພະຍາກະຕະໂດຍອຸປະນິດສະຍະປັດໄຈ ມີ ໓ ຢ່າງ ຄື ອາຣຳມະນູປະນິດສະຍະ ອະນັນຕະຣູປະນິດສະຍະ ແລະ ປະກະຕູປະນິດສະຍະ

ອາຣຳມະນູປະນິດສະຍະ ໄດ້ແກ່ ພຣະອະຣະຫັນພິຈາລະນາຜົນໃຫ້ເປັນອາລົມຢ່າງໜັກແໜ້ນ ພິຈາລະນານິບພານໃຫ້ເປັນອາລົມຢ່າງໜັກແໜ້ນ ນິບພານເປັນປັດໄຈແກ່ຜົນໂດຍອຸປະນິດສະຍະປັດໄຈ

ອະນັນຕະຣູປະນິດສະຍະ ໄດ້ແກ່ ຂັນທີ່ເປັນອັບພະຍາກະຕະວິບາກແລະທີ່ເປັນອັບພະຍາກະຕະກິຣິຍາເຊິ່ງເກີດກ່ອນ ໆ ເປັນປັດໄຈແກ່ຂັນທີ່ເປັນອັບພະຍາກະຕະວິບາກແລະທີ່

ເປັນອັບພະຍາກະຕະກິຣິຍາເຊິ່ງເກີດຫຼັງ ໆ ໂດຍອຸປະນິດສະຍະປັດໄຈ ພະວັງຄະຈິດເປັນປັດໄຈແກ່ອາວັດຊະນະຈິດ ກິຣິຍາເປັນປັດໄຈ ແກ່ວຸດຖານະ ອະນຸໂລມຂອງພຣະອະຣະຫັນເປັນປັດໄຈແກ່ຜົນສະມາບັດ ເນວະສັນຍານາສັນຍາຍະຕະນະກິຣິຍາຂອງທ່ານຜູ້ອອກຈາກນິໂຣດເປັນປັດໄຈແກ່ຜົນສະມາບັດໂດຍອຸປະນິດສະຍະປັດໄຈ

ປະກະຕູປະນິດສະຍະ ໄດ້ແກ່ ສຸກທາງກາຍເປັນປັດໄຈແກ່ສຸກທາງກາຍ ທຸກທາງກາຍແລະຜົນສະມາບັດໂດຍອຸປະນິດສະຍະປັດໄຈ ທຸກທາງກາຍເປັນປັດໄຈແກ່ສຸກທາງກາຍ ທຸກທາງກາຍແລະຜົນສະມາບັດໂດຍອຸປະນິດສະຍະປັດໄຈ ອຸຕຸເປັນປັດໄຈແກ່ສຸກທາງກາຍ ທຸກທາງກາຍແລະຜົນສະມາບັດໂດຍອຸປະນິດສະຍະປັດໄຈ ໂພຊະນະເປັນປັດໄຈແກ່ສຸກທາງກາຍທຸກທາງກາຍແລະຜົນສະມາບັດໂດຍອຸປະນິດສະຍະປັດໄຈ ເສນາສະນະເປັນປັດໄຈແກ່ສຸກທາງກາຍ ທຸກທາງກາຍແລະຜົນສະມາບັດໂດຍອຸປະນິດສະຍະປັດໄຈ ສຸກທາງກາຍ ຯລຯ ທຸກທາງກາຍ ຯລຯ ອຸຕຸ ຯລຯ ໂພຊະນະ ຯລຯ ເສນາສະນະເປັນປັດໄຈແກ່ສຸກທາງກາຍ ທຸກທາງກາຍແລະຜົນສະມາບັດໂດຍ ອຸປະນິດສະຍະປັດໄຈ ຜົນສະມາບັດເປັນປັດໄຈແກ່ສຸກທາງກາຍໂດຍອຸປະນິດສະຍະປັດໄຈ

ພຣະອະຣະຫັນອາໄສສຸກທາງກາຍແລ້ວເຮັດກິຣິຍາສະມາບັດທີ່ຍັງບໍ່ເກີດໃຫ້ເກີດຂຶ້ນເຂົ້າກິຣິຍາສະມາບັດທີ່ເກີດຂຶ້ນແລ້ວ ເຫັນແຈ້ງສັງຂານໂດຍເປັນສະພາວະບໍ່ທ່ຽງ ເປັນທຸກ ເປັນອະນັດຕາ ອາໄສທຸກທາງກາຍ ຯລຯ ອຸຕຸ ຯລຯ ໂພຊະນະ ຯລຯ ເສນາສະນະແລ້ວ ເຮັດກິຣິຍາສະມາບັດ ທີ່ຍັງບໍ່ເກີດໃຫ້ເກີດຂຶ້ນ ເຂົ້າກິຣິຍາສະມາບັດທີ່ເກີດຂຶ້ນແລ້ວ ເຫັນແຈ້ງສັງຂານໂດຍເປັນສະພາວະບໍ່ທ່ຽງ ເປັນທຸກ ເປັນອະນັດຕາ (໑)

ສະພາວະທຳທີ່ເປັນອັບພະຍາກະຕະເປັນປັດໄຈແກ່ສະພາວະທຳທີ່ເປັນກຸສົນໂດຍອຸປະນິດສະຍະປັດໄຈ ມີ ໓ ຢ່າງ ຄື ອາຣຳມະນູປະນິດສະຍະ ອະນັນຕະຣູປະນິດສະຍະແລະປະກະຕູປະນິດສະຍະ

ອາຣຳມະນູປະນິດສະຍະ ໄດ້ແກ່ ພຣະເສຂະພິຈາລະນາຜົນໃຫ້ເປັນອາລົມຢ່າງໜັກແໜ້ນ ພິຈາລະນານິບພານໃຫ້ເປັນອາລົມຢ່າງໜັກແໜ້ນ ນິບພານເປັນປັດໄຈແກ່ໂຄຕະຣະພູໂວທານ ແລະມັກໂດຍອຸປະນິດສະຍະປັດໄຈ

ອະນັນຕະຣູປະນິດສະຍະ ໄດ້ແກ່ ອາວັດຊະນະຈິດເປັນປັດໄຈແກ່ຂັນທີ່ເປັນກຸສົນໂດຍອຸປະນິດສະຍະປັດໄຈ

ປະກະຕູປະນິດສະຍະ ໄດ້ແກ່ ບຸກຄົນອາໄສສຸກທາງກາຍແລ້ວໃຫ້ທານ ສະມາທານສິນຮັກສາອຸໂປສົດ ເຮັດຊານໃຫ້ເກີດຂຶ້ນ ເຮັດວິປັດສະນາໃຫ້ເກີດຂຶ້ນ ເຮັດມັກໃຫ້ເກີດຂຶ້ນ ເຮັດອະພິນຍາໃຫ້ເກີດຂຶ້ນ ເຮັດສະມາບັດໃຫ້ເກີດຂຶ້ນ ອາໄສທຸກທາງກາຍ ຯລຯ ອຸຕຸ ຯລຯ ໂພຊະນະ ຯລຯ ເສນາສະນະແລ້ວ ຈຶ່ງໃຫ້ທານ ສະມາທານສິນ ຮັກສາອຸໂປສົດ ເຮັດຊານໃຫ້ເກີດຂຶ້ນ

ເຮັດວິປັດສະນາໃຫ້ເກີດຂຶ້ນ ເຮັດມັກໃຫ້ເກີດຂຶ້ນ ເຮັດອະພິນຍາໃຫ້ເກີດຂຶ້ນ ເຮັດສະມາບັດໃຫ້ເກີດຂຶ້ນ ສຸກທາງກາຍ ฯลฯ ທຸກທາງກາຍ ฯลฯ ອຸຕຸ ฯลฯ ໂພຊະນະ ฯลฯ ເສນາສະນະເປັນປັດໄຈແກ່ສັດທາ ฯลฯ ສີນ ฯลฯ ສຸຕະ ฯลฯ ຈາຄະ ฯลฯ ປັນຍາໂດຍອຸປະນິດສະຍະປັດໄຈ (໔)

ສະພາວະທຳທີ່ເປັນອັບພະຍາກະຕະເປັນປັດໄຈແກ່ສະພາວະທຳທີ່ເປັນອະກຸສົນໂດຍອຸປະນິດສະຍະປັດໄຈ ມີ ໓ ຢ່າງ ຄື ອາຣຳມະນູປະນິດສະຍະ ອະນັນຕະຣູປະນິດສະຍະແລະປະກະຕູປະນິດສະຍະ

ອາຣຳມະນູປະນິດສະຍະ ໄດ້ແກ່ ບຸກຄົນຍິນດີເພີດເພີນຈັກຂຸໃຫ້ເປັນອາລົມຢ່າງໜັກແໜ້ນ ຍ້ອນເຮັດຄວາມຍິນດີເພີດເພີນຈັກຂຸນັ້ນໃຫ້ເປັນອາລົມຢ່າງໜັກແໜ້ນ ຣາຄະຈຶ່ງເກີດຂຶ້ນ ທິດຖິຈຶ່ງເກີດຂຶ້ນ ບຸກຄົນຍິນດີເພີດເພີນໂສຕະ ฯลฯ ຄານະ ฯลฯ ຊິວຫາ ฯลฯ ກາຍ ฯลฯ ຮູບ ฯลฯ ສຽງ ฯลฯ ກິ່ນ ฯลฯ ຣົດ ฯลฯ ໂຜດຖັບພະ ฯลฯ ຫະໄທວັດຖຸ ฯลฯ ຂັນທີ່ເປັນອັບພະຍາກະຕະວິບາກ ແລະທີ່ເປັນອັບພະຍາກະຕະກິຣິຍາໃຫ້ເປັນອາລົມຢ່າງໜັກແໜ້ນ ຍ້ອນເຮັດຄວາມຍິນດີເພີດເພີນໂສຕະເປັນຕົ້ນນັ້ນໃຫ້ເປັນອາລົມຢ່າງໜັກແໜ້ນ ຣາຄະຈຶ່ງເກີດຂຶ້ນ ທິດຖິຈຶ່ງເກີດຂຶ້ນ

ອະນັນຕະຣູປະນິດສະຍະ ໄດ້ແກ່ ອາວັດຊະນະຈິດເປັນປັດໄຈແກ່ຂັນທີ່ເປັນອະກຸສົນໂດຍອຸປະນິດສະຍະປັດໄຈ

ປະກະຕູປະນິດສະຍະ ໄດ້ແກ່ ບຸກຄົນອາໄສສຸກທາງກາຍແລ້ວຂ້າສັດ ລັກຊັບ ເວົ້າຕົວະ ເວົ້າສັບສໍ່ ເວົ້າຄຳຫຍາບ ເວົ້າໂລເລ ຈູດແງະ ປຸ້ນບໍ່ໃຫ້ເຫຼືອ ປຸ້ນເຮືອນຫຼັງດຽວ ດັກຈີ້ຢູ່ທາງປ່ຽວ ລ່ວງເກີນພັນລະຍາຜູ້ອື່ນ ຂ້າຊາວບ້ານ ຂ້າຊາວນິຄົມ ຂ້າມານດາ ຂ້າບິດາ ຂ້າພຣະອະຣະຫັນ ມີຈິດປະທຸດສະຮ້າຍເຮັດພຣະໂລຫິດຂອງພຣະຕະຖາຄົດເຈົ້າໃຫ້ຫໍ້ ທຳລາຍສົງໃຫ້ແຕກກັນ

ອາໄສທຸກທາງກາຍ ฯลฯ ອຸຕຸ ฯลฯ ໂພຊະນະ ฯลฯ ເສນາສະນະແລ້ວຂ້າສັດ (ຫຍໍ້) ທຳລາຍສົງໃຫ້ແຕກກັນ

ສຸກທາງກາຍ ฯลฯ ທຸກທາງກາຍ ฯลฯ ອຸຕຸ ฯลฯ ໂພຊະນະ ฯลฯ ເສນາສະນະເປັນປັດໄຈແກ່ຣາຄະ ฯลฯ ໂທສະ ฯลฯ ໂມຫະ ฯลฯ ມານະ ฯลฯ ທິດຖິ ฯลฯ ຄວາມປາຖະໜາໂດຍອຸປະນິດສະຍະປັດໄຈ (໓)

## ປຸເຣຊາຕະປັດໄຈ

[໔໔໔] ສະພາວະທຳທີ່ເປັນອັບພະຍາກະຕະເປັນປັດໄຈແກ່ສະພາວະທຳທີ່ເປັນອັບພະຍາກະຕະໂດຍປຸເຣຊາຕະປັດໄຈ ມີ ໒ ຢ່າງ ຄື ອາຣຳມະນະປຸເຣຊາຕະແລະວັດຖຸປຸເຣຊາຕະອາຣຳມະນະປຸເຣຊາຕະ ໄດ້ແກ່ ພຣະອະຣະຫັນເຫັນແຈ້ງຈັກຂຸໂດຍເປັນສະພາວະບໍ່ທ່ຽງ ເປັນທຸກ

ເປັນອະນັດຕາ ເຫັນແຈ້ງໂສຕະ ຯລຯ ຄານະ ຯລຯ ຊິວຫາ ຯລຯ ກາຍ ຯລຯ ຮູບ ຯລຯ ສຽງ ຯລຯ ກິ່ນ ຯລຯ ຣົດ ຯລຯ ໂຜດຖັບພະ ຯລຯ ຫະໄທວັດຖຸໂດຍເປັນສະພາວະບໍ່ທ່ຽງ ເປັນທຸກ ເປັນອະນັດຕາ ເຫັນຮູບດ້ວຍທິບພະຈັກຂຸ ຟັງສຽງດ້ວຍທິບພະໂສຕະທາດ ຮູປາຍະຕະນະເປັນປັດໄຈແກ່ຈັກຂຸວິນຍານໂດຍປຸເຣຊາຕະປັດໄຈ ສັດທາຍະຕະນະເປັນປັດໄຈແກ່ໂສຕະວິນຍານ ຯລຯ ຄັນທາຍະຕະນະເປັນປັດໄຈແກ່ຄານະວິນຍານ ຯລຯ ຣະສາຍະຕະນະເປັນປັດໄຈແກ່ຊິວຫາວິນຍານ ຯລຯ ໂຜດຖັບພາຍະຕະນະເປັນປັດໄຈແກ່ກາຍະວິນຍານໂດຍປຸເຣຊາຕະປັດໄຈ

ວັດຖຸປຸເຣຊາຕະ ໄດ້ແກ່ ຈັກຂາຍະຕະນະເປັນປັດໄຈແກ່ຈັກຂຸວິນຍານໂດຍປຸເຣຊາຕະປັດໄຈ ໂສຕາຍະຕະນະ ເປັນປັດໄຈແກ່ໂສຕະວິນຍານ ຯລຯ ຄານາຍະຕະນະເປັນປັດໄຈແກ່ຄານະວິນຍານ ຯລຯ ຊິວຫາຍະຕະນະເປັນປັດໄຈແກ່ຊິວຫາວິນຍານ ຯລຯ ກາຍາຍະຕະນະເປັນປັດໄຈແກ່ກາຍະວິນຍານໂດຍປຸເຣຊາຕະປັດໄຈ ຫະໄທວັດຖຸເປັນປັດໄຈແກ່ຂັນທີ່ເປັນອັບພະຍາກະຕະວິບາກແລະທີ່ເປັນອັບພະຍາກະຕະກິຣິຍາໂດຍປຸເຣຊາຕະປັດໄຈ (໑)

ສະພາວະທຳທີ່ເປັນອັບພະຍາກະຕະເປັນປັດໄຈແກ່ສະພາວະທຳທີ່ເປັນກຸສົນໂດຍປຸເຣຊາຕະປັດໄຈ ມີ ໒ ຢ່າງ ຄື ອາຣົມມະນະປຸເຣຊາຕະແລະວັດຖຸປຸເຣຊາຕະ

ອາຣົມມະນະປຸເຣຊາຕະ ໄດ້ແກ່ ພຣະເສຂະຫຼືປຸຖຸຊົນ ເຫັນແຈ້ງຈັກຂຸໂດຍເປັນສະພາວະບໍ່ທ່ຽງ ເປັນທຸກ ເປັນອະນັດຕາ ເຫັນແຈ້ງໂສຕະ ຯລຯ ຄານະ ຯລຯ ຊິວຫາ ຯລຯ ກາຍ ຯລຯ ຮູບ ຯລຯ ສຽງ ຯລຯ ກິ່ນ ຯລຯ ຣົດ ຯລຯ ໂຜດຖັບພະ ຯລຯ ຫະໄທວັດຖຸໂດຍເປັນສະພາວະບໍ່ທ່ຽງ ເປັນທຸກ ເປັນອະນັດຕາ ເຫັນຮູບດ້ວຍທິບພະຈັກຂຸ ຟັງສຽງດ້ວຍທິບພະໂສຕະທາດ

ວັດຖຸປຸເຣຊາຕະ ໄດ້ແກ່ ຫະໄທວັດຖຸເປັນປັດໄຈແກ່ຂັນທີ່ເປັນກຸສົນໂດຍປຸເຣຊາຕະປັດໄຈ

ສະພາວະທຳທີ່ເປັນອັບພະຍາກະຕະເປັນປັດໄຈແກ່ສະພາວະທຳທີ່ເປັນອະກຸສົນໂດຍປຸເຣຊາຕະປັດໄຈ ມີ ໒ ຢ່າງ ຄື ອາຣົມມະນະປຸເຣຊາຕະແລະວັດຖຸປຸເຣຊາຕະ

ອາຣົມມະນະປຸເຣຊາຕະ ໄດ້ແກ່ ບຸກຄົນຍິນດີເພີດເພີນຈັກຂຸ ຍ້ອນຜາຣົບຄວາມຍິນດີເພີດເພີນຈັກຂຸນັ້ນ ຣາຄະຈຶ່ງເກີດຂຶ້ນ ທິດຖິຈຶ່ງເກີດຂຶ້ນ ວິຈິກິດສາຈຶ່ງເກີດຂຶ້ນ ອຸດທັດຈະຈຶ່ງເກີດຂຶ້ນ ໂທມະນັດຈຶ່ງເກີດຂຶ້ນ ຍິນດີເພີດເພີນໂສຕະ ຯລຯ ຄານະ ຯລຯ ຊິວຫາ ຯລຯ ກາຍ ຯລຯ ຮູບ ຯລຯ ສຽງ ຯລຯ ກິ່ນ ຯລຯ ຣົດ ຯລຯ ໂຜດຖັບພະ ຯລຯ ຫະໄທວັດຖຸ ຍ້ອນຜາຣົບຄວາມຍິນດີເພີດເພີນໂສຕະເປັນຕົ້ນນັ້ນ ຣາຄະຈຶ່ງເກີດຂຶ້ນ ທິດຖິຈຶ່ງເກີດຂຶ້ນ ວິຈິກິດສາຈຶ່ງເກີດຂຶ້ນ ອຸດທັດຈະຈຶ່ງເກີດຂຶ້ນ ໂທມະນັດຈຶ່ງເກີດຂຶ້ນ

ວັດຖຸປຸເຣຊາຕະ ໄດ້ແກ່ ຫະໄທວັດຖຸເປັນປັດໄຈແກ່ຂັນທີ່ເປັນອະກຸສົນໂດຍປຸເຣຊາຕະປັດໄຈ (໓)

## ປັດສາຊາຕະປັດໄຈ

[໔໔໕] ສະພາວະທຳທີ່ເປັນກຸສົນເປັນປັດໄຈແກ່ສະພາວະທຳທີ່ເປັນອັບພະຍາກະຕະໂດຍປັດສາຊາຕະປັດໄຈ ໄດ້ແກ່ ຂັນທີ່ເປັນກຸສົນເຊິ່ງເກີດພາຍຫຼັງເປັນປັດໄຈແກ່ກາຍນີ້ທີ່ເກີດກ່ອນໂດຍປັດສາຊາຕະປັດໄຈ (໑)

ສະພາວະທຳທີ່ເປັນອະກຸສົນເປັນປັດໄຈແກ່ສະພາວະທຳທີ່ເປັນອັບພະຍາກະຕະໂດຍປັດສາຊາຕະປັດໄຈ ໄດ້ແກ່ ຂັນທີ່ເປັນອະກຸສົນເຊິ່ງເກີດພາຍຫຼັງເປັນປັດໄຈແກ່ກາຍນີ້ທີ່ເກີດກ່ອນໂດຍປັດສາຊາຕະປັດໄຈ (໑)

ສະພາວະທຳທີ່ເປັນອັບພະຍາກະຕະເປັນປັດໄຈແກ່ສະພາວະທຳທີ່ເປັນອັບພະຍາກະຕະໂດຍປັດສາຊາຕະປັດໄຈ ໄດ້ແກ່ ຂັນທີ່ເປັນອັບພະຍາກະຕະວິບາກແລະທີ່ເປັນອັບພະຍາກະຕະກິຣິຍາເຊິ່ງເກີດພາຍຫຼັງເປັນປັດໄຈແກ່ກາຍນີ້ທີ່ເກີດກ່ອນໂດຍປັດສາຊາຕະປັດໄຈ (໑)

## ອາເສວະນະປັດໄຈ

[໔໔໖] ສະພາວະທຳທີ່ເປັນກຸສົນເປັນປັດໄຈແກ່ສະພາວະທຳທີ່ເປັນກຸສົນໂດຍອາເສວະນະປັດໄຈ ໄດ້ແກ່ ຂັນທີ່ເປັນກຸສົນເຊິ່ງເກີດກ່ອນ ໆ ເປັນປັດໄຈແກ່ຂັນທີ່ເປັນກຸສົນເຊິ່ງເກີດຫຼັງ ໆ ໂດຍອາເສວະນະປັດໄຈ ອະນຸໂລມເປັນປັດໄຈແກ່ໂຄຕະຣະພູ ອະນຸໂລມເປັນປັດໄຈແກ່ໂວທານ ໂຄຕະຣະພູເປັນປັດໄຈແກ່ມັກ ໂວທານເປັນປັດໄຈແກ່ມັກໂດຍອາເສວະນະປັດໄຈ (໑)

ສະພາວະທຳທີ່ເປັນອະກຸສົນເປັນປັດໄຈແກ່ສະພາວະທຳທີ່ເປັນອະກຸສົນໂດຍອາເສວະນະປັດໄຈ ໄດ້ແກ່ ຂັນທີ່ເປັນອະກຸສົນເຊິ່ງເກີດກ່ອນ ໆ ເປັນປັດໄຈແກ່ຂັນທີ່ເປັນອະກຸສົນເຊິ່ງເກີດຫຼັງ ໆ ໂດຍອາເສວະນະປັດໄຈ (໑)

ສະພາວະທຳທີ່ເປັນອັບພະຍາກະຕະເປັນປັດໄຈແກ່ສະພາວະທຳທີ່ເປັນອັບພະຍາກະຕະໂດຍອາເສວະນະປັດໄຈ ໄດ້ແກ່ ຂັນທີ່ເປັນອັບພະຍາກະຕະກິຣິຍາເຊິ່ງເກີດກ່ອນ ໆ ເປັນປັດໄຈແກ່ຂັນທີ່ເປັນອັບພະຍາກະຕະກິຣິຍາເຊິ່ງເກີດຫຼັງ ໆ ໂດຍອາເສວະນະປັດໄຈ (໑)

## ກຳມະປັດໄຈ

[໔໔໗] ສະພາວະທຳທີ່ເປັນກຸສົນເປັນປັດໄຈແກ່ສະພາວະທຳທີ່ເປັນກຸສົນໂດຍກຳມະປັດໄຈ ໄດ້ແກ່ ເຈດຕະນາທີ່ເປັນກຸສົນເປັນປັດໄຈແກ່ສຳປະຍຸດຕະຂັນໂດຍກຳມະປັດໄຈ (໑)

ສະພາວະທຳທີ່ເປັນກຸສົນເປັນປັດໄຈແກ່ສະພາວະທຳທີ່ເປັນອັບພະຍາກະຕະໂດຍກຳມະປັດໄຈ ມີ ໒ ຢ່າງ ຄື ສະຫະຊາຕະແລະນານາຂະນິກະ

ສະຫະຊາຕະ ໄດ້ແກ່ ເຈດຕະນາທີ່ເປັນກຸສົນເປັນປັດໄຈແກ່ຈິດຕະສະມຸດຖານຮູບໂດຍກຳມະປັດໄຈ

ນານາຂະນິກະ ໄດ້ແກ່ ເຈດຕະນາທີ່ເປັນກຸສົນເປັນປັດໄຈແກ່ຂັນທີ່ເປັນວິບາກ ແລະກະຕັດຕາຣູບໂດຍກຳມະປັດໄຈ (໔)

ສະພາວະທຳທີ່ເປັນກຸສົນເປັນປັດໄຈແກ່ສະພາວະທຳທີ່ເປັນກຸສົນແລະທີ່ເປັນອັບພະຍາກະຕະໂດຍກຳມະປັດໄຈ ໄດ້ແກ່ ເຈດຕະນາທີ່ເປັນກຸສົນເປັນປັດໄຈແກ່ສຳປະຍຸດຕະຂັນແລະຈິດຕະສະມຸດຖານຣູບໂດຍກຳມະປັດໄຈ (໓)

ສະພາວະທຳທີ່ເປັນອະກຸສົນເປັນປັດໄຈແກ່ສະພາວະທຳທີ່ເປັນອະກຸສົນໂດຍກຳມະປັດໄຈ ໄດ້ແກ່ ເຈດຕະນາທີ່ເປັນອະກຸສົນເປັນປັດໄຈແກ່ສຳປະຍຸດຕະຂັນໂດຍກຳມະປັດໄຈ (໑)

ສະພາວະທຳທີ່ເປັນອະກຸສົນເປັນປັດໄຈແກ່ສະພາວະທຳທີ່ເປັນອັບພະຍາກະຕະໂດຍກຳມະປັດໄຈ ມີ ໔ ຢ່າງ ຄື ສະຫະຊາຕະແລະນານາຂະນິກະ

ສະຫະຊາຕະ ໄດ້ແກ່ ເຈດຕະນາທີ່ເປັນອະກຸສົນເປັນປັດໄຈແກ່ຈິດຕະສະມຸດຖານຣູບໂດຍກຳມະປັດໄຈ

ນານາຂະນິກະ ໄດ້ແກ່ ເຈດຕະນາທີ່ເປັນອະກຸສົນເປັນປັດໄຈແກ່ຂັນທີ່ເປັນວິບາກແລະກະຕັດຕາຣູບໂດຍກຳມະປັດໄຈ (໔)

ສະພາວະທຳທີ່ເປັນອະກຸສົນເປັນປັດໄຈແກ່ສະພາວະທຳທີ່ເປັນອະກຸສົນແລະທີ່ເປັນອັບພະຍາກະຕະໂດຍກຳມະປັດໄຈ ໄດ້ແກ່ ເຈດຕະນາທີ່ເປັນອະກຸສົນເປັນປັດໄຈແກ່ສຳປະຍຸດຕະຂັນແລະ ຈິດຕະສະມຸດຖານຣູບໂດຍກຳມະປັດໄຈ (໓)

ສະພາວະທຳທີ່ເປັນອັບພະຍາກະຕະເປັນປັດໄຈແກ່ສະພາວະທຳທີ່ເປັນອັບພະຍາກະຕະໂດຍກຳມະປັດໄຈ ໄດ້ແກ່ ເຈດຕະນາທີ່ເປັນອັບພະຍາກະຕະວິບາກແລະທີ່ເປັນອັບພະຍາກະຕະກິຣິຍາເປັນປັດໄຈແກ່ສຳປະຍຸດຕະຂັນ ແລະຈິດຕະສະມຸດຖານຣູບໂດຍກຳມະປັດໄຈໃນປະຕິສົນທິຂະນະ ເຈດຕະນາທີ່ເປັນ ອັບພະຍາກະຕະວິບາກເປັນປັດໄຈແກ່ສຳປະຍຸດຕະຂັນແລະກະຕັດຕາຣູບໂດຍກຳມະປັດໄຈ ເຈດຕະນາເປັນປັດໄຈແກ່ຫະໄທວັດຖຸໂດຍກຳມະປັດໄຈ (໑)

## ວິປາກະປັດໄຈ

[໔໔໗] ສະພາວະທຳທີ່ເປັນອັບພະຍາກະຕະເປັນປັດໄຈແກ່ສະພາວະທຳທີ່ເປັນອັບພະຍາກະຕະໂດຍວິປາກະປັດໄຈ ໄດ້ແກ່ ຂັນ ໑ ທີ່ເປັນອັບພະຍາກະຕະວິບາກເປັນປັດໄຈແກ່ຂັນ ໓ ແລະຈິດຕະສະມຸດຖານຣູບໂດຍວິປາກະປັດໄຈ ຂັນ ໓ ເປັນປັດໄຈແກ່ຂັນ ໑ ແລະຈິດຕະສະມຸດຖານຣູບໂດຍວິປາກະປັດໄຈ ຂັນ ໔ ເປັນປັດໄຈແກ່ຂັນ ໔ ແລະຈິດຕະສະມຸດຖານຣູບໂດຍວິປາກະປັດໄຈ ໃນປະຕິສົນທິຂະນະ ຂັນ ໑ ທີ່ເປັນອັບພະຍາກະຕະວິບາກເປັນປັດໄຈແກ່ຂັນ ໓

ແລະກະຕັດຕາຮູບໂດຍວິປາກະປັດໄຈ ຂັນ ໓ ເປັນປັດໄຈແກ່ຂັນ ໑ ແລະກະຕັດຕາຮູບໂດຍວິປາກະປັດໄຈ ຂັນ ໒ ເປັນປັດໄຈແກ່ຂັນ ໒ ແລະກະຕັດຕາຮູບໂດຍວິປາກະປັດໄຈ ຂັນເປັນປັດໄຈແກ່ຫະໄທວັດຖຸໂດຍວິປາກະປັດໄຈ (໑)

## ອາຫາຣະປັດໄຈ

[໔໒໙] ສະພາວະທຳທີ່ເປັນກຸສົນເປັນປັດໄຈແກ່ສະພາວະທຳທີ່ເປັນກຸສົນໂດຍອາຫາຣະປັດໄຈ ໄດ້ແກ່ ອາຫານທີ່ເປັນກຸສົນເປັນປັດໄຈແກ່ສຳປະຍຸດຕະຂັນໂດຍອາຫາຣະປັດໄຈ (໑)

ສະພາວະທຳທີ່ເປັນກຸສົນເປັນປັດໄຈແກ່ສະພາວະທຳທີ່ເປັນອັບພະຍາກະຕະໂດຍອາຫາຣະປັດໄຈ ໄດ້ແກ່ ອາຫານທີ່ເປັນກຸສົນເປັນປັດໄຈແກ່ຈິດຕະສະມຸດຖານຮູບໂດຍອາຫາຣະປັດໄຈ (໒)

ສະພາວະທຳທີ່ເປັນກຸສົນເປັນປັດໄຈແກ່ສະພາວະທຳທີ່ເປັນກຸສົນແລະທີ່ເປັນອັບພະຍາກະຕະໂດຍອາຫາຣະປັດໄຈ ໄດ້ແກ່ ອາຫານທີ່ເປັນກຸສົນເປັນປັດໄຈແກ່ສຳປະຍຸດຕະຂັນແລະຈິດຕະສະມຸດຖານຮູບໂດຍອາຫາຣະປັດໄຈ (໓)

ສະພາວະທຳທີ່ເປັນອະກຸສົນເປັນປັດໄຈແກ່ສະພາວະທຳທີ່ເປັນອະກຸສົນໂດຍອາຫາຣະປັດໄຈ ໄດ້ແກ່ ອາຫານທີ່ເປັນອະກຸສົນເປັນປັດໄຈແກ່ສຳປະຍຸດຕະຂັນໂດຍອາຫາຣະປັດໄຈ (໑)

ສະພາວະທຳທີ່ເປັນອະກຸສົນເປັນປັດໄຈແກ່ສະພາວະທຳທີ່ເປັນອັບພະຍາກະຕະໂດຍອາຫາຣະປັດໄຈ ໄດ້ແກ່ ອາຫານທີ່ເປັນອະກຸສົນເປັນປັດໄຈແກ່ຈິດຕະສະມຸດຖານຮູບໂດຍອາຫາຣະປັດໄຈ (໒)

ສະພາວະທຳທີ່ເປັນອະກຸສົນເປັນປັດໄຈແກ່ສະພາວະທຳທີ່ເປັນອະກຸສົນແລະທີ່ເປັນອັບພະຍາກະຕະ ໂດຍອາຫາຣະປັດໄຈ ໄດ້ແກ່ ອາຫານທີ່ເປັນອະກຸສົນເປັນປັດໄຈແກ່ສຳປະຍຸດຕະຂັນແລະຈິດຕະສະມຸດຖານຮູບໂດຍອາຫາຣະປັດໄຈ (໓)

ສະພາວະທຳທີ່ເປັນອັບພະຍາກະຕະເປັນປັດໄຈແກ່ສະພາວະທຳທີ່ເປັນອັບພະຍາກະຕະໂດຍອາຫາຣະປັດໄຈ ໄດ້ແກ່ ອາຫານທີ່ເປັນອັບພະຍາກະຕະວິບາກແລະທີ່ເປັນອັບພະຍາກະຕະກິຣິຍາເປັນປັດໄຈແກ່ສຳປະຍຸດຕະຂັນ ແລະຈິດຕະສະມຸດຖານຮູບໂດຍອາຫາຣະປັດໄຈ ໃນປະຕິສົນທິຂະນະ ອາຫານທີ່ເປັນອັບພະຍາກະຕະວິບາກເປັນປັດໄຈແກ່ສຳປະຍຸດຕະຂັນແລະກະຕັດຕາຮູບໂດຍອາຫາຣະປັດໄຈ ກະວະລິງກາຣາຫານເປັນປັດໄຈແກ່ກາຍນີ້ໂດຍອາຫາຣະປັດໄຈ (໑)

## ອິນຊີຍະປັດໄຈ

[໔໓໐] ສະພາວະທຳທີ່ເປັນກຸສົນເປັນປັດໄຈແກ່ສະພາວະທຳທີ່ເປັນກຸສົນໂດຍອິນທະຣິຍະປັດໄຈ ໄດ້ແກ່ ອິນຊີທີ່ເປັນກຸສົນເປັນປັດໄຈແກ່ສຳປະຍຸດຕະຂັນໂດຍອິນທະຣິຍະປັດໄຈ (໑)

ສະພາວະທຳທີ່ເປັນກຸສົນເປັນປັດໄຈແກ່ສະພາວະທຳທີ່ເປັນອັບພະຍາກະຕະໂດຍອິນທະຣິຍະປັດໄຈ ໄດ້ແກ່ ອິນຊີທີ່ເປັນກຸສົນເປັນປັດໄຈແກ່ຈິດຕະສະມຸດຖານຮູບໂດຍອິນທະຣິຍະປັດໄຈ (໒)

ສະພາວະທຳທີ່ເປັນກຸສົນເປັນປັດໄຈແກ່ສະພາວະທຳທີ່ເປັນກຸສົນແລະທີ່ເປັນອັບພະຍາກະຕະໂດຍອິນທະຣິຍະປັດໄຈ ໄດ້ແກ່ ອິນຊີທີ່ເປັນກຸສົນເປັນປັດໄຈແກ່ສຳປະຍຸດຕະຂັນແລະຈິດຕະສະມຸດຖານຮູບໂດຍອິນທະຣິຍະປັດໄຈ (໓)

ສະພາວະທຳທີ່ເປັນອະກຸສົນເປັນປັດໄຈແກ່ສະພາວະທຳທີ່ເປັນອະກຸສົນໂດຍອິນທະຣິຍະປັດໄຈ ໄດ້ແກ່ ອິນຊີທີ່ເປັນອະກຸສົນເປັນປັດໄຈແກ່ສຳປະຍຸດຕະຂັນໂດຍອິນທະຣິຍະປັດໄຈ (໑)

ສະພາວະທຳທີ່ເປັນອະກຸສົນເປັນປັດໄຈແກ່ສະພາວະທຳທີ່ເປັນອັບພະຍາກະຕະໂດຍອິນທະຣິຍະປັດໄຈ ໄດ້ແກ່ ອິນຊີທີ່ເປັນອະກຸສົນເປັນປັດໄຈແກ່ຈິດຕະສະມຸດຖານຮູບໂດຍອິນທະຣິຍະປັດໄຈ (໒)

ສະພາວະທຳທີ່ເປັນອະກຸສົນເປັນປັດໄຈແກ່ສະພາວະທຳທີ່ເປັນອະກຸສົນແລະທີ່ເປັນອັບພະຍາກະຕະ ໂດຍອິນທະຣິຍະປັດໄຈ ໄດ້ແກ່ ອິນຊີທີ່ເປັນອະກຸສົນເປັນປັດໄຈແກ່ສຳປະຍຸດຕະຂັນແລະຈິດຕະສະມຸດຖານຮູບໂດຍອິນທະຣິຍະປັດໄຈ (໓)

ສະພາວະທຳທີ່ເປັນອັບພະຍາກະຕະເປັນປັດໄຈແກ່ສະພາວະທຳທີ່ເປັນອັບພະຍາກະຕະໂດຍອິນຊີຍະປັດໄຈ ໄດ້ແກ່ ອິນຊີທີ່ເປັນອັບພະຍາກະຕະວິບາກແລະທີ່ເປັນອັບພະຍາກະຕະກິຣິຍາເປັນປັດໄຈແກ່ສຳປະຍຸດຕະຂັນແລະຈິດຕະສະມຸດຖານຮູບໂດຍອິນທະຣິຍະປັດໄຈ ໃນປະຕິສົນທິຂະນະ ອິນຊີທີ່ເປັນອັບພະຍາກະຕະວິບາກເປັນປັດໄຈແກ່ສຳປະຍຸດຕະຂັນແລະກະຕັດຕາຮູບໂດຍອິນທະຣິຍະປັດໄຈ ຈັກຂຸນຊີເປັນປັດໄຈແກ່ຈັກຂຸວິນຍານໂດຍອິນທະຣິຍະປັດໄຈ ໂສຕິນຊີເປັນປັດໄຈແກ່ ໂສຕະວິນຍານໂດຍອິນທະຣິຍະປັດໄຈ ຄານິນຊີເປັນປັດໄຈແກ່ຄານະວິນຍານໂດຍອິນທະຣິຍະປັດໄຈ ຊິວຫິນຊີເປັນປັດໄຈແກ່ຊິວຫາວິນຍານໂດຍອິນທະຣິຍະປັດໄຈ ກາຍິນຊີເປັນປັດໄຈແກ່ກາຍະວິນຍານໂດຍອິນທະຣິຍະປັດໄຈ ຮູບຊີວິຕິນຊີເປັນປັດໄຈແກ່ກະຕັດຕາຮູບໂດຍອິນທະຣິຍະປັດໄຈ (໑)

## ຊານະປັດໄຈ

[໔໓໑] ສະພາວະທຳທີ່ເປັນກຸສົນເປັນປັດໄຈແກ່ສະພາວະທຳທີ່ເປັນກຸສົນໂດຍຊານະປັດໄຈ ໄດ້ແກ່ ອົງຊານທີ່ເປັນກຸສົນເປັນປັດໄຈແກ່ສຳປະຍຸດຕະຂັນໂດຍຊານະປັດໄຈ (໑)

ສະພາວະທຳທີ່ເປັນກຸສົນເປັນປັດໄຈແກ່ສະພາວະທຳທີ່ເປັນອັບພະຍາກະຕະໂດຍຊານະປັດໄຈ ໄດ້ແກ່ ອົງຊານທີ່ເປັນກຸສົນເປັນປັດໄຈແກ່ຈິດຕະສະມຸດຖານຮູບໂດຍຊານະປັດໄຈ (໒)

ສະພາວະທຳທີ່ເປັນກຸສົນເປັນປັດໄຈແກ່ສະພາວະທຳທີ່ເປັນກຸສົນແລະທີ່ເປັນອັບພະຍາກະຕະໂດຍຊານະປັດໄຈ ໄດ້ແກ່ ອົງຊານທີ່ເປັນກຸສົນເປັນປັດໄຈແກ່ສຳປະຍຸດຕະຂັນແລະຈິດຕະສະມຸດຖານຮູບໂດຍຊານະປັດໄຈ (໓)

ສະພາວະທຳທີ່ເປັນອະກຸສົນເປັນປັດໄຈແກ່ສະພາວະທຳທີ່ເປັນອະກຸສົນໂດຍຊານະປັດໄຈ ໄດ້ແກ່ ອົງຊານທີ່ເປັນອະກຸສົນເປັນປັດໄຈແກ່ສຳປະຍຸດຕະຂັນໂດຍຊານະປັດໄຈ (໑)

ສະພາວະທຳທີ່ເປັນອະກຸສົນເປັນປັດໄຈແກ່ສະພາວະທຳທີ່ເປັນອັບພະຍາກະຕະໂດຍຊານະປັດໄຈ ໄດ້ແກ່ ອົງຊານທີ່ເປັນອະກຸສົນເປັນປັດໄຈແກ່ຈິດຕະສະມຸດຖານຮູບໂດຍຊານະປັດໄຈ (໒)

ສະພາວະທຳທີ່ເປັນອະກຸສົນເປັນປັດໄຈແກ່ສະພາວະທຳທີ່ເປັນອະກຸສົນແລະທີ່ເປັນອັບພະຍາກະຕະ ໂດຍຊານະປັດໄຈ ໄດ້ແກ່ ອົງຊານທີ່ເປັນອະກຸສົນເປັນປັດໄຈແກ່ສຳປະຍຸດຕະຂັນແລະຈິດຕະສະມຸດຖານຮູບໂດຍຊານະປັດໄຈ (໓)

ສະພາວະທຳທີ່ເປັນອັບພະຍາກະຕະເປັນປັດໄຈແກ່ສະພາວະທຳທີ່ເປັນອັບພະຍາກະຕະໂດຍຊານະປັດໄຈ ໄດ້ແກ່ ອົງຊານທີ່ເປັນອັບພະຍາກະຕະວິບາກແລະທີ່ເປັນອັບພະຍາກະຕະກິຣິຍາເປັນປັດໄຈແກ່ສຳປະຍຸດຕະຂັນ ແລະຈິດຕະສະມຸດຖານຮູບໂດຍຊານະປັດໄຈ ໃນປະຕິສົນທິຂະນະ ອົງຊານທີ່ເປັນອັບພະຍາກະຕະວິບາກເປັນປັດໄຈແກ່ສຳປະຍຸດຕະຂັນ ແລະກະຕັດຕາຮູບໂດຍຊານະປັດໄຈ (໑)

## ມັກຄະປັດໄຈ

[໕໓໘] ສະພາວະທຳທີ່ເປັນກຸສົນເປັນປັດໄຈແກ່ສະພາວະທຳທີ່ເປັນກຸສົນໂດຍມັກຄະປັດໄຈ ໄດ້ແກ່ ອົງມັກທີ່ເປັນກຸສົນເປັນປັດໄຈແກ່ສຳປະຍຸດຕະຂັນໂດຍມັກຄະປັດໄຈ (໑)

ສະພາວະທຳທີ່ເປັນກຸສົນເປັນປັດໄຈແກ່ສະພາວະທຳທີ່ເປັນອັບພະຍາກະຕະໂດຍມັກຄະປັດໄຈ ໄດ້ແກ່ ອົງມັກທີ່ເປັນກຸສົນເປັນປັດໄຈແກ່ຈິດຕະສະມຸດຖານຮູບໂດຍມັກຄະປັດໄຈ (໒)

ສະພາວະທຳທີ່ເປັນກຸສົນເປັນປັດໄຈແກ່ສະພາວະທຳທີ່ເປັນກຸສົນແລະທີ່ເປັນອັບພະຍາກະຕະໂດຍມັກຄະປັດໄຈ ໄດ້ແກ່ ອົງມັກທີ່ເປັນກຸສົນເປັນປັດໄຈແກ່ສຳປະຍຸດຕະຂັນແລະຈິດຕະສະມຸດຖານຮູບໂດຍມັກຄະປັດໄຈ (໓)

ສະພາວະທຳທີ່ເປັນອະກຸສົນເປັນປັດໄຈແກ່ສະພາວະທຳທີ່ເປັນອະກຸສົນໂດຍມັກຄະປັດໄຈ ໄດ້ແກ່ ອົງມັກທີ່ເປັນອະກຸສົນເປັນປັດໄຈແກ່ສຳປະຍຸດຕະຂັນໂດຍມັກຄະປັດໄຈ (໑)

ສະພາວະທຳທີ່ເປັນອະກຸສົນເປັນປັດໄຈແກ່ສະພາວະທຳທີ່ເປັນອັບພະຍາກະຕະໂດຍມັກຄະປັດໄຈ ໄດ້ແກ່ ອົງມັກທີ່ເປັນອະກຸສົນເປັນປັດໄຈແກ່ຈິດຕະສະມຸດຖານຮູບໂດຍມັກຄະປັດໄຈ (໔)

ສະພາວະທຳທີ່ເປັນອະກຸສົນເປັນປັດໄຈແກ່ສະພາວະທຳທີ່ເປັນອະກຸສົນແລະທີ່ເປັນອັບພະຍາກະຕະ ໂດຍມັກຄະປັດໄຈ ໄດ້ແກ່ ອົງມັກທີ່ເປັນອະກຸສົນເປັນປັດໄຈແກ່ສຳປະຍຸດຕະຂັນແລະຈິດຕະສະມຸດຖານຮູບໂດຍມັກຄະປັດໄຈ (໕)

ສະພາວະທຳທີ່ເປັນອັບພະຍາກະຕະເປັນປັດໄຈແກ່ສະພາວະທຳທີ່ເປັນອັບພະຍາກະຕະໂດຍມັກຄະປັດໄຈ ໄດ້ແກ່ ອົງມັກທີ່ເປັນອັບພະຍາກະຕະວິບາກແລະທີ່ເປັນອັບພະຍາກະຕະກິຣິຍາເປັນປັດໄຈແກ່ສຳປະຍຸດຕະຂັນ ແລະຈິດຕະສະມຸດຖານຮູບໂດຍມັກຄະປັດໄຈ ໃນປະຕິສົນທິຂະນະ ອົງມັກທີ່ເປັນອັບພະຍາກະຕະວິບາກເປັນປັດໄຈແກ່ສຳປະຍຸດຕະຂັນແລະກະຕັດຕາຮູບໂດຍມັກຄະປັດໄຈ (໑)

## ສຳປະຍຸດຕະປັດໄຈ

[໔໕໕] ສະພາວະທຳທີ່ເປັນກຸສົນເປັນປັດໄຈແກ່ສະພາວະທຳທີ່ເປັນກຸສົນໂດຍສຳປະຍຸດຕະປັດໄຈ ໄດ້ແກ່ ຂັນ ໑ ທີ່ເປັນກຸສົນເປັນປັດໄຈແກ່ຂັນ ໓ ໂດຍສຳປະຍຸດຕະປັດໄຈ ຂັນ ໓ ເປັນປັດໄຈແກ່ຂັນ ໑ ໂດຍສຳປະຍຸດຕະປັດໄຈ ຂັນ ໒ ເປັນປັດໄຈແກ່ຂັນ ໒ ໂດຍສຳປະຍຸດຕະປັດໄຈ (໑)

ສະພາວະທຳທີ່ເປັນອະກຸສົນເປັນປັດໄຈແກ່ສະພາວະທຳທີ່ເປັນອະກຸສົນໂດຍສຳປະຍຸດຕະປັດໄຈ ໄດ້ແກ່ ຂັນ ໑ ທີ່ເປັນອະກຸສົນເປັນປັດໄຈແກ່ຂັນ ໓ ໂດຍສຳປະຍຸດຕະປັດໄຈ ຂັນ ໓ ເປັນປັດໄຈແກ່ຂັນ ໑ ໂດຍສຳປະຍຸດຕະປັດໄຈ ຂັນ ໒ ເປັນປັດໄຈແກ່ຂັນ ໒ ໂດຍສຳປະຍຸດຕະປັດໄຈ (໑)

ສະພາວະທຳທີ່ເປັນອັບພະຍາກະຕະເປັນປັດໄຈແກ່ສະພາວະທຳທີ່ເປັນອັບພະຍາກະຕະໂດຍສຳປະຍຸດຕະປັດໄຈ ໄດ້ແກ່ ຂັນ ໑ ທີ່ເປັນອັບພະຍາກະຕະວິບາກ ແລະທີ່ເປັນອັບພະຍາກະຕະກິຣິຍາເປັນປັດໄຈແກ່ຂັນ ໓ ໂດຍສຳປະຍຸດຕະປັດໄຈ ຂັນ ໓ ເປັນປັດໄຈແກ່ຂັນ ໑ ໂດຍສຳປະຍຸດຕະປັດໄຈ ຂັນ ໒ ເປັນປັດໄຈແກ່ຂັນ ໒ ໂດຍສຳປະຍຸດຕະປັດໄຈ ໃນປະຕິສົນທິຂະນະ ຂັນ ໑ ທີ່ເປັນອັບພະຍາກະຕະວິບາກເປັນປັດໄຈແກ່ຂັນ ໓ ໂດຍສຳປະຍຸດຕະປັດໄຈ ຂັນ ໓ ເປັນປັດໄຈແກ່ຂັນ ໑ ໂດຍສຳປະຍຸດຕະປັດໄຈ ຂັນ ໒ ເປັນປັດໄຈແກ່ຂັນ ໒ ໂດຍສຳປະຍຸດຕະປັດໄຈ (໑)

# ວິບປະຍຸດຕະປັດໄຈ

[໔໓໔] ສະພາວະທຳທີ່ເປັນກຸສົນເປັນປັດໄຈແກ່ສະພາວະທຳທີ່ເປັນອັບພະຍາກະຕະໂດຍວິບປະຍຸດຕະປັດໄຈ ມີ ໒ ຢ່າງ ຄື ສະຫະຊາຕະແລະປັດສາຊາຕະ

ສະຫະຊາຕະ ໄດ້ແກ່ ຂັນທີ່ເປັນກຸສົນເປັນປັດໄຈແກ່ຈິດຕະສະມຸດຖານຮູບໂດຍວິບປະຍຸດຕະປັດໄຈ

ປັດສາຊາຕະ ໄດ້ແກ່ ຂັນທີ່ເປັນກຸສົນເປັນປັດໄຈແກ່ກາຍນີ້ທີ່ເກີດກ່ອນໂດຍ ວິບປະຍຸດຕະປັດໄຈ

ສະພາວະທຳທີ່ເປັນອະກຸສົນເປັນປັດໄຈແກ່ສະພາວະທຳທີ່ເປັນອັບພະຍາກະຕະໂດຍວິບປະຍຸດຕະປັດໄຈ ມີ ໒ ຢ່າງ ຄື ສະຫະຊາຕະແລະປັດສາຊາຕະ

ສະຫະຊາຕະ ໄດ້ແກ່ ຂັນທີ່ເປັນອະກຸສົນເປັນປັດໄຈແກ່ຈິດຕະສະມຸດຖານຮູບໂດຍວິບປະຍຸດຕະປັດໄຈ

ປັດສາຊາຕະ ໄດ້ແກ່ ຂັນທີ່ເປັນອະກຸສົນເປັນປັດໄຈແກ່ກາຍນີ້ທີ່ເກີດກ່ອນໂດຍວິບປະຍຸດຕະປັດໄຈ (໑)

ສະພາວະທຳທີ່ເປັນອັບພະຍາກະຕະເປັນປັດໄຈແກ່ສະພາວະທຳທີ່ເປັນອັບພະຍາກະຕະໂດຍ ວິບປະຍຸດຕະປັດໄຈ ມີ ໓ ຢ່າງ ຄື ສະຫະຊາຕະ ປຸເຣຊາຕະ ແລະປັດສາຊາຕະ

ສະຫະຊາຕະ ໄດ້ແກ່ ຂັນທີ່ເປັນອັບພະຍາກະຕະວິບາກແລະທີ່ເປັນອັບພະຍາກະຕະກິຣິຍາເປັນປັດໄຈແກ່ຈິດຕະສະມຸດຖານຮູບໂດຍວິບປະຍຸດຕະປັດໄຈ ໃນປະຕິສົນທິຂະນະ ຂັນທີ່ເປັນອັບພະຍາກະຕະວິບາກເປັນປັດໄຈແກ່ກະຕັດຕາຮູບໂດຍວິບປະຍຸດຕະປັດໄຈ ຂັນເປັນປັດໄຈແກ່ຫະໄທວັດຖຸໂດຍ ວິບປະຍຸດຕະປັດໄຈ ຫະໄທວັດຖຸເປັນປັດໄຈແກ່ຂັນໂດຍວິບປະຍຸດຕະປັດໄຈ

ປຸເຣຊາຕະ ໄດ້ແກ່ ຈັກຂາຍະຕະນະເປັນປັດໄຈແກ່ຈັກຂຸວິນຍານໂດຍວິບປະຍຸດຕະປັດໄຈ ໂສຕາຍະຕະນະເປັນປັດໄຈແກ່ໂສຕະວິນຍານໂດຍວິບປະຍຸດຕະປັດໄຈ ຄານາຍະຕະນະເປັນປັດໄຈ ແກ່ຄານະວິນຍານໂດຍວິບປະຍຸດຕະປັດໄຈ ຊິວຫາຍະຕະນະເປັນປັດໄຈແກ່ຊິວຫາວິນຍານ ໂດຍວິບປະຍຸດຕະປັດໄຈ ກາຍາຍະຕະນະເປັນປັດໄຈແກ່ກາຍະວິນຍານໂດຍວິບປະຍຸດຕະປັດໄຈ ຫະໄທວັດຖຸ ເປັນປັດໄຈແກ່ຂັນທີ່ເປັນອັບພະຍາກະຕະວິບາກແລະທີ່ເປັນອັບພະຍາກະຕະກິຣິຍາໂດຍ ວິບປະຍຸດຕະປັດໄຈ

ປັດສາຊາຕະ ໄດ້ແກ່ ຂັນທີ່ເປັນອັບພະຍາກະຕະວິບາກ ແລະທີ່ເປັນອັບພະຍາກະຕະກິຣິຍາເປັນປັດໄຈແກ່ກາຍນີ້ທີ່ເກີດກ່ອນໂດຍວິບປະຍຸດຕະປັດໄຈ (໒)

ສະພາວະທຳທີ່ເປັນອັບພະຍາກະຕະເປັນປັດໄຈແກ່ສະພາວະທຳທີ່ເປັນກຸສົນໂດຍວິບປະຍຸດຕະປັດໄຈ ມີ ຢ່າງດຽວ ຄື ປຸເຣຊາຕະ ໄດ້ແກ່ ຫະໄທວັດຖຸເປັນປັດໄຈແກ່ຂັນທີ່ເປັນກຸສົນໂດຍວິບປະຍຸດຕະປັດໄຈ

ສະພາວະທຳທີ່ເປັນອັບພະຍາກະຕະເປັນປັດໄຈແກ່ສະພາວະທຳທີ່ເປັນອະກຸສົນໂດຍວິບປະຍຸດຕະປັດໄຈ ມີຢ່າງດຽວ ຄື ປຸເຣຊາຕະ ໄດ້ແກ່ ຫະໄທວັດຖຸເປັນປັດໄຈແກ່ຂັນທີ່ເປັນອະກຸສົນໂດຍວິບປະຍຸດຕະປັດໄຈ (໓)

## ອັດຖິປັດໄຈ

[໘໓໕] ສະພາວະທຳທີ່ເປັນກຸສົນເປັນປັດໄຈແກ່ສະພາວະທຳທີ່ເປັນກຸສົນໂດຍອັດຖິປັດໄຈ ໄດ້ແກ່ ຂັນ ໑ ທີ່ເປັນກຸສົນເປັນປັດໄຈແກ່ຂັນ ໓ ໂດຍອັດຖິປັດໄຈ ຂັນ ໓ ເປັນປັດໄຈ ແກ່ຂັນ ໑ ໂດຍອັດຖິປັດໄຈ ຂັນ ໒ ເປັນປັດໄຈແກ່ຂັນ ໒ ໂດຍອັດຖິປັດໄຈ (໑)

ສະພາວະທຳທີ່ເປັນກຸສົນເປັນປັດໄຈແກ່ສະພາວະທຳທີ່ເປັນອັບພະຍາກະຕະໂດຍອັດຖິປັດໄຈ ມີ ໒ ຢ່າງ ຄື ສະຫະຊາຕະແລະປັດສາຊາຕະ

ສະຫະຊາຕະ ໄດ້ແກ່ ຂັນທີ່ເປັນກຸສົນເປັນປັດໄຈແກ່ຈິດຕະສະມຸດຖານຮູບໂດຍອັດຖິປັດໄຈ

ປັດສາຊາຕະ ໄດ້ແກ່ ຂັນທີ່ເປັນກຸສົນເປັນປັດໄຈແກ່ກາຍນີ້ທີ່ເກີດກ່ອນໂດຍອັດຖິປັດໄຈ (໒)

ສະພາວະທຳທີ່ເປັນກຸສົນເປັນປັດໄຈແກ່ສະພາວະທຳທີ່ເປັນກຸສົນແລະທີ່ເປັນອັບພະຍາກະຕະໂດຍອັດຖິປັດໄຈ ໄດ້ແກ່ ຂັນ ໑ ທີ່ເປັນກຸສົນເປັນປັດໄຈແກ່ຂັນ ໓ ແລະຈິດຕະສະມຸດຖານຮູບໂດຍອັດຖິປັດໄຈ ຂັນ ໓ ເປັນປັດໄຈແກ່ຂັນ ໑ ແລະຈິດຕະສະມຸດຖານຮູບໂດຍອັດຖິປັດໄຈ ຂັນ ໒ ເປັນປັດໄຈແກ່ຂັນ ໒ ແລະຈິດຕະສະມຸດຖານຮູບໂດຍອັດຖິປັດໄຈ (໓)

ສະພາວະທຳທີ່ເປັນອະກຸສົນເປັນປັດໄຈແກ່ສະພາວະທຳທີ່ເປັນອະກຸສົນໂດຍອັດຖິປັດໄຈ ໄດ້ແກ່ ຂັນ ໑ ທີ່ເປັນອະກຸສົນເປັນປັດໄຈແກ່ຂັນ ໓ ໂດຍອັດຖິປັດໄຈ ຂັນ ໓ ເປັນປັດໄຈແກ່ຂັນ ໑ ໂດຍອັດຖິປັດໄຈ ຂັນ ໒ ເປັນປັດໄຈແກ່ຂັນ ໒ ໂດຍອັດຖິປັດໄຈ (໑)

ສະພາວະທຳທີ່ເປັນອະກຸສົນເປັນປັດໄຈແກ່ສະພາວະທຳທີ່ເປັນອັບພະຍາກະຕະໂດຍອັດຖິປັດໄຈ ມີ ໒ ຢ່າງ ຄື ສະຫະຊາຕະແລະປັດສາຊາຕະ

ສະຫະຊາຕະ ໄດ້ແກ່ ຂັນທີ່ເປັນອະກຸສົນເປັນປັດໄຈແກ່ຈິດຕະສະມຸດຖານຮູບໂດຍອັດຖິປັດໄຈ

ປັດສາຊາຕະ ໄດ້ແກ່ ຂັນທີ່ເປັນອະກຸສົນເປັນປັດໄຈແກ່ກາຍນີ້ທີ່ເກີດກ່ອນໂດຍອັດຖິປັດໄຈ (໒)

ສະພາວະທຳທີ່ເປັນອະກຸສົນເປັນປັດໄຈແກ່ສະພາວະທຳທີ່ເປັນອະກຸສົນແລະທີ່ເປັນອັບພະຍາກະຕະ ໂດຍອັດຖິປັດໄຈ ໄດ້ແກ່ ຂັນ ໑ ທີ່ເປັນອະກຸສົນເປັນປັດໄຈແກ່ຂັນ ໓ ແລະຈິດຕະສະມຸດຖານຮູບໂດຍອັດຖິປັດໄຈ ຂັນ ໓ ເປັນປັດໄຈແກ່ຂັນ ໑ ແລະຈິດຕະສະມຸດຖານຮູບໂດຍອັດຖິປັດໄຈ ຂັນ ໔ ເປັນປັດໄຈແກ່ຂັນ ໔ ແລະຈິດຕະສະມຸດຖານຮູບໂດຍອັດຖິປັດໄຈ (໓)

ສະພາວະທຳທີ່ເປັນອັບພະຍາກະຕະເປັນປັດໄຈແກ່ສະພາວະທຳທີ່ເປັນອັບພະຍາກະຕະ ໂດຍອັດຖິປັດໄຈ ມີ ໕ ຢ່າງ ຄື ສະຫະຊາຕະ ປຸເຣຊາຕະ ປັດສາຊາຕະ ອາຫາຣະ ແລະອິນທະຣິຍະ

ສະຫະຊາຕະ ໄດ້ແກ່ ຂັນ ໑ ທີ່ເປັນອັບພະຍາກະຕະວິບາກແລະທີ່ເປັນອັບພະຍາກະຕະກິຣິຍາ ເປັນປັດໄຈແກ່ຂັນ ໓ ແລະຈິດຕະສະມຸດຖານຮູບໂດຍອັດຖິປັດໄຈ ຂັນ ໓ ເປັນປັດໄຈແກ່ ຂັນ ໑ ແລະຈິດຕະສະມຸດຖານຮູບໂດຍອັດຖິປັດໄຈ ຂັນ ໔ ເປັນປັດໄຈແກ່ຂັນ ໔ ແລະຈິດຕະສະມຸດຖານຮູບໂດຍອັດຖິປັດໄຈ ໃນປະຕິສົນທິຂະນະ ຂັນ ໑ ທີ່ເປັນອັບພະຍາກະຕະວິບາກເປັນປັດໄຈ ແກ່ຂັນ ໓ ແລະກະຕັດຕາຮູບໂດຍອັດຖິປັດໄຈ ຂັນ ໓ ເປັນປັດໄຈແກ່ຂັນ ໑ ແລະກະຕັດຕາຮູບໂດຍອັດຖິປັດໄຈ ຂັນ ໔ ເປັນປັດໄຈແກ່ຂັນ ໔ ແລະກະຕັດຕາຮູບໂດຍ ອັດຖິປັດໄຈ ຂັນເປັນປັດໄຈແກ່ຫະໄທວັດຖຸໂດຍອັດຖິປັດໄຈ ຫະໄທວັດຖຸເປັນປັດໄຈແກ່ ຂັນໂດຍອັດຖິປັດໄຈ ມະຫາພູຕະຮູບ ໑ ເປັນປັດໄຈແກ່ມະຫາພູຕະຮູບ ໓ ໂດຍອັດຖິປັດໄຈ ມະຫາພູຕະຮູບ ໓ ເປັນປັດໄຈແກ່ມະຫາພູຕະຮູບ ໑ ໂດຍອັດຖິປັດໄຈ ມະຫາພູຕະຮູບ ໔ ເປັນປັດໄຈແກ່ມະຫາພູຕະຮູບ ໔ ໂດຍອັດຖິປັດໄຈ ມະຫາພູຕະຮູບເປັນປັດໄຈແກ່ຈິດຕະສະມຸດຖານຮູບແລະກະຕັດຕາຮູບທີ່ເປັນອຸປາທາຍະຮູບໂດຍອັດຖິປັດໄຈ ຯລຯ ທີ່ເປັນພາຍນອກ ຯລຯ ທີ່ມີອາຫານເປັນສະມຸດຖານ ຯລຯ ທີ່ມີອຸຕຸເປັນສະມຸດຖານ ຯລຯ ສຳລັບເຫຼົ່າອະສັນຍະສັດຕະພົມ ມະຫາພູຕະຮູບ ໑ ເປັນປັດໄຈແກ່ມະຫາພູຕະຮູບ ໓ ໂດຍອັດຖິປັດໄຈ ມະຫາພູຕະຮູບ ໓ ເປັນປັດໄຈແກ່ມະຫາພູຕະຮູບ ໑ ໂດຍອັດຖິປັດໄຈ ມະຫາພູຕະຮູບ ໔ ເປັນປັດໄຈແກ່ມະຫາພູຕະຮູບ ໔ ໂດຍອັດຖິປັດໄຈ ມະຫາພູຕະຮູບເປັນປັດໄຈແກ່ກະຕັດຕາຮູບທີ່ເປັນອຸປາທາຍະຮູບໂດຍອັດຖິປັດໄຈ (໑)

ປຸເຣຊາຕະ ໄດ້ແກ່ ພຣະອະຣະຫັນເຫັນແຈ້ງຈັກຂຸໂດຍເປັນສະພາວະບໍ່ທ່ຽງ ເປັນທຸກ ເປັນອະນັດຕາ ເຫັນແຈ້ງໂສຕະ ຯລຯ ຄານະ ຯລຯ ຊິວຫາ ຯລຯ ກາຍ ຯລຯ ຮູບ ຯລຯ ສຽງ ຯລຯ ກິ່ນ ຯລຯ ຣົດ ຯລຯ ໂຜດຖັບພະ ຯລຯ ຫະໄທວັດຖຸ ໂດຍເປັນ ສະພາວະບໍ່ທ່ຽງ ເປັນທຸກ ເປັນອະນັດຕາ ເຫັນຮູບດ້ວຍທິບພະຈັກຂຸ ຟັງສຽງດ້ວຍ ທິບພະໂສຕະທາດ ຮູປາຍະຕະນະເປັນປັດໄຈແກ່ຈັກຂຸວິນຍານໂດຍອັດຖິປັດໄຈ ສັດທາຍະຕະນະ ຯລຯ ໂຜດຖັບພາຍະຕະນະເປັນປັດໄຈແກ່ກາຍະວິນຍານໂດຍອັດຖິປັດໄຈ ຈັກຂາຍະຕະນະເປັນປັດໄຈແກ່ຈັກຂຸວິນຍານໂດຍອັດຖິປັດໄຈ ໂສຕາຍະຕະນະເປັນປັດໄຈແກ່ໂສຕະວິນຍານ ຯລຯ ຄານາຍະຕະນະເປັນປັດ

ໃຈແກ່ຄານະວິນຍານ ໆລໆ ຊິວຫາຍະຕະນະເປັນປັດໃຈແກ່ຊິວຫາວິນຍານ ໆລໆ ກາຍາຍະຕະນະເປັນປັດໃຈແກ່ກາຍະວິນຍານໂດຍອັດຖິປັດໃຈ ຫະໄທວັດຖຸເປັນປັດໃຈແກ່ຂັນທີ່ເປັນອັບພະຍາກະຕະວິບາກ ແລະທີ່ເປັນອັບພະຍາກະຕະກິຣິຍາໂດຍອັດຖິປັດໃຈ

ປັດສາຊາຕະ ໄດ້ແກ່ ຂັນທີ່ເປັນອັບພະຍາກະຕະວິບາກແລະທີ່ເປັນອັບພະຍາກະຕະກິຣິຍາ ເປັນປັດໃຈແກ່ກາຍນີ້ ທີ່ເກີດກ່ອນໂດຍອັດຖິປັດໃຈ ກະວະລິງກາຣາຫານເປັນປັດໃຈແກ່ກາຍນີ້ໂດຍອັດຖິປັດໃຈ ຮູບຊີວິຕິນຊີເປັນປັດໃຈແກ່ກະຕັດຕາຮູບໂດຍອັດຖິປັດໃຈ (໑)

ສະພາວະທຳທີ່ເປັນອັບພະຍາກະຕະເປັນປັດໃຈແກ່ສະພາວະທຳທີ່ເປັນກຸສົນໂດຍອັດຖິປັດໃຈ ມີຢ່າງດຽວ ຄື ປຸເຣຊາຕະ ໄດ້ແກ່ ພຣະເສຂະຫຼືປຸຖຸຊົນເຫັນແຈ້ງຈັກຂຸໂດຍເປັນສະພາວະບໍ່ທ່ຽງ ເປັນທຸກ ເປັນອະນັດຕາ ເຫັນແຈ້ງໂສຕະ ໆລໆ ຄານະ ໆລໆ ຊິວຫາ ໆລໆ ກາຍ ໆລໆ ຮູບ ໆລໆ ສຽງ ໆລໆ ກິ່ນ ໆລໆ ຣົດ ໆລໆ ໂຜດຖັບພະ ໆລໆ ຫະໄທວັດຖຸໂດຍເປັນສະພາວະບໍ່ທ່ຽງ ເປັນທຸກ ເປັນອະນັດຕາ ເຫັນຮູບດ້ວຍທິບພະຈັກຂຸ ຟັງສຽງດ້ວຍທິບພະໂສຕະທາດ ຫະໄທວັດຖຸເປັນປັດໃຈແກ່ຂັນທີ່ເປັນກຸສົນໂດຍອັດຖິປັດໃຈ (໒)

ສະພາວະທຳທີ່ເປັນອັບພະຍາກະຕະເປັນປັດໃຈແກ່ສະພາວະທຳທີ່ເປັນອະກຸສົນໂດຍອັດຖິປັດໃຈ ມີຢ່າງດຽວ ຄື ປຸເຣຊາຕະ ໄດ້ແກ່ ບຸກຄົນຍິນດີເພີດເພີນຈັກຂຸ ຍ້ອນຜາຣົບຄວາມຍິນດີເພີດເພີນຈັກຂຸນັ້ນ ຣາຄະຈຶ່ງເກີດຂຶ້ນ ທິດຖິຈຶ່ງເກີດຂຶ້ນ ວິຈິກິດສາຈຶ່ງເກີດຂຶ້ນ ອຸດທັດຈະຈຶ່ງເກີດຂຶ້ນ ໂທມະນັດຈຶ່ງເກີດຂຶ້ນ ຍິນດີເພີດເພີນໂສຕະ ໆລໆ ຄານະ ໆລໆ ຊິວຫາ ໆລໆ ກາຍ ໆລໆ ຮູບ ໆລໆ ສຽງ ໆລໆ ກິ່ນ ໆລໆ ຣົດ ໆລໆ ໂຜດຖັບພະ ໆລໆ ຫະໄທວັດຖຸ ຍ້ອນຜາຣົບຄວາມຍິນດີເພີດເພີນໂສຕະເປັນຕົ້ນນັ້ນ ຣາຄະຈຶ່ງເກີດຂຶ້ນ ໆລໆ ໂທມະນັດຈຶ່ງເກີດຂຶ້ນ ຫະໄທວັດຖຸເປັນປັດໃຈແກ່ຂັນທີ່ເປັນອະກຸສົນໂດຍອັດຖິປັດໃຈ (໓)

ສະພາວະທຳທີ່ເປັນກຸສົນແລະທີ່ເປັນອັບພະຍາກະຕະເປັນປັດໃຈແກ່ສະພາວະທຳທີ່ເປັນກຸສົນໂດຍອັດຖິປັດໃຈ ມີ ໒ ຢ່າງ ຄື ສະຫະຊາຕະ ແລະປຸເຣຊາຕະ

ສະຫະຊາຕະ ໄດ້ແກ່ ຂັນ ໑ ທີ່ເປັນກຸສົນແລະຫະໄທວັດຖຸເປັນປັດໃຈແກ່ຂັນ ໓ ໂດຍອັດຖິປັດໃຈ ໆລໆ ຂັນ ໒ ແລະຫະໄທວັດຖຸເປັນປັດໃຈແກ່ຂັນ ໒ ໂດຍອັດຖິປັດໃຈ (໑)

ສະພາວະທຳທີ່ເປັນກຸສົນແລະທີ່ເປັນອັບພະຍາກະຕະເປັນປັດໃຈແກ່ສະພາວະທຳທີ່ເປັນອັບພະຍາກະຕະໂດຍອັດຖິປັດໃຈ ມີ ໔ ຢ່າງ ຄື ສະຫະຊາຕະ ປັດສາຊາຕະ ອາຫາຣະ ແລະອິນທະຣິຍະ

ສະຫະຊາຕະ ໄດ້ແກ່ ຂັນທີ່ເປັນກຸສົນແລະມະຫາພູຕະຮູບເປັນປັດໃຈແກ່ຈິດຕະສະມຸດຖານຮູບໂດຍອັດຖິປັດໃຈ

ປັດສາຊາຕະ ໄດ້ແກ່ ຂັນທີ່ເປັນກຸສົນແລະກະວະລິງກາຣາຫານເປັນປັດໄຈແກ່ກາຍນີ້ ໂດຍອັດຖິປັດໄຈ

ປັດສາຊາຕະ ໄດ້ແກ່ ຂັນທີ່ເປັນກຸສົນແລະຮູບຊີວິຕິນຊີເປັນປັດໄຈແກ່ກະຕັດຕາຮູບໂດຍ ອັດຖິປັດໄຈ (໔)

ສະພາວະທຳທີ່ເປັນອະກຸສົນ ແລະທີ່ເປັນອັບພະຍາກະຕະເປັນປັດໄຈແກ່ສະພາວະທຳທີ່ ເປັນອະກຸສົນໂດຍອັດຖິປັດໄຈ ມີ ໔ ຢ່າງ ຄື ສະຫະຊາຕະແລະປຸເຣຊາຕະ

ສະຫະຊາຕະ ໄດ້ແກ່ ຂັນ ໑ ທີ່ເປັນອະກຸສົນແລະຫະໄທວັດຖຸເປັນປັດໄຈແກ່ຂັນ ໓ ໂດຍອັດຖິປັດໄຈ ຂັນ ໓ ແລະຫະໄທວັດຖຸເປັນປັດໄຈແກ່ຂັນ ໑ ໂດຍອັດຖິປັດໄຈ ຂັນ ໔ ແລະ ຫະໄທວັດຖຸເປັນປັດໄຈແກ່ຂັນ ໔ ໂດຍອັດຖິປັດໄຈ (໑)

ສະພາວະທຳທີ່ເປັນອະກຸສົນແລະທີ່ເປັນອັບພະຍາກະຕະເປັນປັດໄຈແກ່ສະພາວະທຳທີ່ ເປັນອັບພະຍາກະຕະໂດຍອັດຖິປັດໄຈ ມີ ໔ ຢ່າງ ຄື ສະຫະຊາຕະ ປັດສາຊາຕະ ອາຫາຣະ ແລະອິນທະຣິຍະ

ສະຫະຊາຕະ ໄດ້ແກ່ ຂັນທີ່ເປັນອະກຸສົນແລະມະຫາພູຕະຮູບເປັນປັດໄຈແກ່ຈິດຕະສະ ມຸດຖານຮູບໂດຍອັດຖິປັດໄຈ

ປັດສາຊາຕະ ໄດ້ແກ່ ຂັນທີ່ເປັນອະກຸສົນແລະກະວະລິງກາຣາຫານເປັນປັດໄຈແກ່ກາຍນີ້ ໂດຍອັດຖິປັດໄຈ

ປັດສາຊາຕະ ໄດ້ແກ່ ຂັນທີ່ເປັນອະກຸສົນແລະຮູບຊີວິຕິນຊີເປັນປັດໄຈແກ່ກະຕັດຕາຮູບ ໂດຍອັດຖິປັດໄຈ (໔)

## ນັດຖິປັດໄຈ

[໔໓໙] ສະພາວະທຳທີ່ເປັນກຸສົນເປັນປັດໄຈແກ່ສະພາວະທຳທີ່ເປັນກຸສົນໂດຍນັດຖິປັດ ໄຈ ໄດ້ແກ່ ຂັນທີ່ເປັນກຸສົນເຊິ່ງເກີດກ່ອນ ໆ ເປັນປັດໄຈແກ່ຂັນທີ່ເປັນກຸສົນເຊິ່ງເກີດຫຼັງ ໆ ໂດຍນັດຖິປັດໄຈ (ຫຍໍ້)

(ເພິ່ງຂະຫຍາຍໃຫ້ພິສະດານເໝືອນະອະນັນຕະຣະປັດໄຈ)

## ວິຄະຕະປັດໄຈ

[໔໓໗] ສະພາວະທຳທີ່ເປັນກຸສົນເປັນປັດໄຈແກ່ສະພາວະທຳທີ່ເປັນກຸສົນໂດຍວິຄະຕະ ປັດໄຈ ໄດ້ແກ່ ຂັນທີ່ເປັນກຸສົນເຊິ່ງເກີດກ່ອນ ໆ ເປັນປັດໄຈແກ່ຂັນທີ່ເປັນກຸສົນເຊິ່ງເກີດຫຼັງ ໆ ໂດຍວິຄະຕະປັດໄຈ (ຫຍໍ້)

(ເພິ່ງຂະຫຍາຍໃຫ້ພິສະດານເໝືອນະອະນັນຕະຣະປັດໄຈ)

## ອະວິຄະຕະປັດໄຈ

[໔໙໗] ສະພາວະທຳທີ່ເປັນກຸສົນເປັນປັດໄຈແກ່ສະພາວະທຳທີ່ເປັນກຸສົນໂດຍອະວິຄະຕະປັດໄຈ ໄດ້ແກ່ ຂັນ ໑ ທີ່ເປັນກຸສົນເປັນປັດໄຈແກ່ຂັນ ໓ ໂດຍອະວິຄະຕະປັດໄຈ ຂັນ ໓ ເປັນປັດໄຈແກ່ຂັນ ໑ ໂດຍອະວິຄະຕະປັດໄຈ ຂັນ ໔ ເປັນປັດໄຈແກ່ຂັນ ໔ ໂດຍອະວິຄະຕະປັດໄຈ (ຫຍໍ້)

(ເພິ່ງຂະຫຍາຍໃຫ້ພິສະດານເໝືອນອັດຖິປັດໄຈ)

**ວິພັງແຫ່ງປັນຫາວາຣະ ຈົບ**

# ໑. ປັດຈະຍານຸໂລມະ ໔. ສັງຂະຍາວາຣະ

## ສຸດທະໄນ

| | | |
|---|---|---|
| [໔໙໘] | ເຫຕຸປັດໄຈ | ມີ ໗ ວາຣະ |
| | ອາຣົມມະນະປັດໄຈ | ມີ ໙ ວາຣະ |
| | ອະທິປະຕິປັດໄຈ | ມີ ໑໐ ວາຣະ |
| | ອະນັນຕະຣະປັດໄຈ | ມີ ໗ ວາຣະ |
| | ສະມະນັນຕະຣະປັດໄຈ | ມີ ໗ ວາຣະ |
| | ສະຫະຊາຕະປັດໄຈ | ມີ ໙ ວາຣະ |
| | ອັນຍະມັນຍະປັດໄຈ | ມີ ໓ ວາຣະ |
| | ນິດສະຍະປັດໄຈ | ມີ ໑໓ ວາຣະ |
| | ອຸປະນິດສະຍະປັດໄຈ | ມີ ໙ ວາຣະ |
| | ປຸເຣຊາຕະປັດໄຈ | ມີ ໓ ວາຣະ |
| | ປັດສາຊາຕະປັດໄຈ | ມີ ໓ ວາຣະ |
| | ອາເສວະນະປັດໄຈ | ມີ ໓ ວາຣະ |
| | ກຳມະປັດໄຈ | ມີ ໗ ວາຣະ |
| | ວິປາກະປັດໄຈ | ມີ ໑ ວາຣະ |
| | ອາຫາຣະປັດໄຈ | ມີ ໗ ວາຣະ |
| | ອິນຊີຍະປັດໄຈ | ມີ ໗ ວາຣະ |
| | ຊານະປັດໄຈ | ມີ ໗ ວາຣະ |
| | ມັກຄະປັດໄຈ | ມີ ໗ ວາຣະ |

[໔໓] ສະພາວະທຳທີ່ສຳປະຍຸດດ້ວຍທຸກຂະເວທະນາເປັນປັດໄຈ ແກ່ສະພາວະທຳທີ່ສຳປະຍຸດດ້ວຍທຸກຂະເວທະນາໂດຍອະທິປະຕິປັດໄຈ ມີຢ່າງດຽວ ຄື ສະຫະຊາຕາທິປະຕິ ໄດ້ແກ່ ອະທິບໍດີທຳ ທີ່ສຳປະຍຸດດ້ວຍທຸກຂະເວທະນາເປັນປັດໄຈ ແກ່ສຳປະຍຸດຕະຂັນໂດຍອະທິປະຕິປັດໄຈ (໑)

[໔໔] ສະພາວະທຳທີ່ສຳປະຍຸດດ້ວຍອະທຸກຂະມະສຸຂະເວທະນາເປັນປັດໄຈ ແກ່ສະພາວະທຳທີ່ສຳປະຍຸດດ້ວຍອະທຸກຂະມະສຸຂະເວທະນາໂດຍອະທິປະຕິປັດໄຈ ມີ ໔ ຢ່າງ ຄື ອາຣໍາມະນາທິປະຕິແລະສະຫະຊາຕາທິປະຕິ

ອາຣໍາມະນາທິປະຕິ ໄດ້ແກ່ ບຸກຄົນມີຈິດສຳປະຍຸດດ້ວຍອະທຸກຂະມະສຸຂະເວທະນາ ໃຫ້ທານ ສະມາທານສີນ ຮັກສາອຸໂປສົດ ແລ້ວພິຈາລະນາກຸສົນນັ້ນໃຫ້ເປັນອາລົມຢ່າງໜັກແໜ້ນດ້ວຍຈິດທີ່ສຳປະຍຸດດ້ວຍອະທຸກຂະມະສຸຂະເວທະນາ ອອກຈາກຊານທີ່ສຳປະຍຸດດ້ວຍອະທຸກຂະມະສຸຂະເວທະນາ ອອກຈາກມັກ ອອກຈາກຜົນແລ້ວພິຈາລະນາກຸສົນນັ້ນໃຫ້ເປັນອາລົມຢ່າງໜັກແໜ້ນດ້ວຍຈິດທີ່ສຳປະຍຸດດ້ວຍອະທຸກຂະມະສຸຂະເວທະນາ ຍິນດີເພີດເພີນຂັນທີ່ສຳປະຍຸດດ້ວຍອະທຸກຂະມະສຸຂະເວທະນາໃຫ້ເປັນອາລົມຢ່າງໜັກແໜ້ນ ດ້ວຍຈິດທີ່ສຳປະຍຸດດ້ວຍອະທຸກຂະມະສຸຂະເວທະນາ ຍ້ອນເຮັດຄວາມຍິນດີເພີດເພີນຂັນນັ້ນໃຫ້ເປັນອາລົມຢ່າງໜັກແໜ້ນ ຣາຄະທີ່ສຳປະຍຸດດ້ວຍອະທຸກຂະມະສຸຂະເວທະນາຈຶ່ງເກີດຂຶ້ນ ທິດຖິຈຶ່ງເກີດຂຶ້ນ

ສະຫະຊາຕາທິປະຕິ ໄດ້ແກ່ ອະທິບໍດີທຳທີ່ສຳປະຍຸດດ້ວຍອະທຸກຂະມະສຸຂະເວທະນາເປັນປັດໄຈແກ່ສຳປະຍຸດຕະຂັນໂດຍອະທິປະຕິປັດໄຈ (໑)

ສະພາວະທຳທີ່ສຳປະຍຸດດ້ວຍອະທຸກຂະມະສຸຂະເວທະນາເປັນປັດໄຈແກ່ສະພາວະທຳທີ່ສຳປະຍຸດດ້ວຍສຸກຂະເວທະນາໂດຍອະທິປະຕິປັດໄຈ ມີຢ່າງດຽວ ຄື ອາຣໍາມະນາທິປະຕິ ໄດ້ແກ່ ບຸກຄົນມີຈິດສຳປະຍຸດດ້ວຍອະທຸກຂະມະສຸຂະເວທະນາ ໃຫ້ທານ ສະມາທານສີນ ຮັກສາອຸໂປສົດແລ້ວ ພິຈາລະນາກຸສົນນັ້ນໃຫ້ເປັນອາລົມຢ່າງໜັກແໜ້ນດ້ວຍຈິດທີ່ສຳປະຍຸດດ້ວຍສຸກຂະເວທະນາ ອອກຈາກຊານທີ່ສຳປະຍຸດດ້ວຍອະທຸກຂະມະສຸຂະເວທະນາ ອອກຈາກມັກ ອອກຈາກຜົນ ແລ້ວພິຈາລະນາກຸສົນນັ້ນໃຫ້ເປັນອາລົມຢ່າງໜັກແໜ້ນດ້ວຍຈິດທີ່ສຳປະຍຸດດ້ວຍອະທຸກຂະມະສຸຂະເວທະນາ ຍິນດີເພີດເພີນຂັນທີ່ສຳປະຍຸດດ້ວຍອະທຸກຂະມະສຸຂະເວທະນາໃຫ້ເປັນອາລົມຢ່າງໜັກແໜ້ນດ້ວຍຈິດທີ່ສຳປະຍຸດດ້ວຍສຸກຂະເວທະນາ ຍ້ອນເຮັດຄວາມຍິນດີເພີດເພີນຂັນນັ້ນໃຫ້ເປັນອາລົມຢ່າງໜັກແໜ້ນ ຣາຄະທີ່ສຳປະຍຸດດ້ວຍສຸກຂະເວທະນາຈຶ່ງເກີດຂຶ້ນ ທິດຖິຈຶ່ງເກີດຂຶ້ນ (໔)

## ອະນັນຕະຣະປັດໄຈ

[໔໕] ສະພາວະທຳທີ່ສຳປະຍຸດດ້ວຍສຸກຂະເວທະນາເປັນປັດໄຈແກ່ສະພາວະທຳທີ່ສຳປະຍຸດດ້ວຍສຸກຂະເວທະນາໂດຍອະນັນຕະຣະປັດໄຈ ໄດ້ແກ່ ຂັນທີ່ສຳປະຍຸດດ້ວຍສຸກຂະ

ເວທະນາເຊິ່ງເກີດກ່ອນ ໆ ເປັນປັດໄຈແກ່ຂັນທີ່ສຳປະຍຸດດ້ວຍສຸກຂະເວທະນາເຊິ່ງເກີດຫຼັງ ໆ ໂດຍອະນັນຕະຣະປັດໄຈ ອະນຸໂລມ ທີ່ສຳປະຍຸດດ້ວຍສຸກຂະເວທະນາເປັນປັດໄຈແກ່ໂຄຕະຣະພູໂດຍອະນັນຕະຣະປັດໄຈ ອະນຸໂລມເປັນປັດໄຈແກ່ໂວທານ ໂຄຕະຣະພູເປັນປັດໄຈແກ່ມັກ ໂວທານເປັນປັດໄຈແກ່ມັກ ມັກເປັນປັດໄຈແກ່ຜົນ ຜົນເປັນປັດໄຈແກ່ຜົນ ອະນຸໂລມເປັນປັດໄຈແກ່ຜົນສະມາບັດທີ່ສຳປະຍຸດດ້ວຍສຸກຂະເວທະນາໂດຍອະນັນຕະຣະປັດໄຈ ຂັນທີ່ສຳປະຍຸດດ້ວຍສຸກຂະເວທະນາເປັນປັດໄຈແກ່ວຸດຖານະທີ່ສຳປະຍຸດດ້ວຍ ສຸກຂະເວທະນາໂດຍອະນັນຕະຣະປັດໄຈ (໑)

ສະພາວະທຳທີ່ສຳປະຍຸດດ້ວຍສຸກຂະເວທະນາເປັນປັດໄຈແກ່ສະພາວະທຳທີ່ສຳປະຍຸດດ້ວຍອະທຸກຂະມະສຸຂະເວທະນາໂດຍອະນັນຕະຣະປັດໄຈ ໄດ້ແກ່ ຈຸຕິຈິດທີ່ສຳປະຍຸດດ້ວຍສຸກຂະເວທະນາເປັນປັດໄຈ ແກ່ອຸປະປັດຕິຈິດທີ່ສຳປະຍຸດດ້ວຍອະທຸກຂະມະສຸຂະເວທະນາໂດຍອະນັນຕະຣະປັດໄຈ ພະວັງຄະຈິດທີ່ສຳປະຍຸດດ້ວຍສຸກຂະເວທະນາເປັນປັດໄຈແກ່ອາວັດຊະນະຈິດໂດຍອະນັນຕະຣະປັດໄຈ ກາຍວິນຍານທີ່ປະກອບດ້ວຍສຸກເປັນປັດໄຈແກ່ມະໂນທາດທີ່ເປັນວິບາກໂດຍອະນັນຕະຣະປັດໄຈ ມະໂນວິນຍານທາດທີ່ເປັນວິບາກ ເຊິ່ງສຳປະຍຸດດ້ວຍສຸກຂະເວທະນາເປັນປັດໄຈ ແກ່ມະໂນວິນຍານທາດທີ່ເປັນກິຣິຍາໂດຍອະນັນຕະຣະປັດໄຈ ພະວັງຄະຈິດທີ່ສຳປະຍຸດດ້ວຍສຸກຂະເວທະນາເປັນປັດໄຈ ແກ່ພະວັງຄະຈິດທີ່ສຳປະຍຸດດ້ວຍອະທຸກຂະມະສຸຂະເວທະນາ ໂດຍອະນັນຕະຣະປັດໄຈ ກຸສົນແລະອະກຸສົນທີ່ສຳປະຍຸດດ້ວຍສຸກຂະເວທະນາເປັນປັດໄຈ ແກ່ວຸດຖານະທີ່ສຳປະຍຸດດ້ວຍອະທຸກຂະມະສຸຂະເວທະນາ ກິຣິຍາເປັນປັດໄຈແກ່ວຸດຖານະ ຜົນເປັນປັດໄຈແກ່ວຸດຖານະໂດຍອະນັນຕະຣະປັດໄຈ (໔)

[໔໖] ສະພາວະທຳທີ່ສຳປະຍຸດດ້ວຍທຸກຂະເວທະນາເປັນປັດໄຈແກ່ສະພາວະທຳທີ່ສຳປະຍຸດດ້ວຍທຸກຂະເວທະນາໂດຍອະນັນຕະຣະປັດໄຈ ໄດ້ແກ່ ຂັນທີ່ສຳປະຍຸດດ້ວຍທຸກຂະເວທະນາເຊິ່ງເກີດກ່ອນ ໆ ເປັນປັດໄຈແກ່ຂັນທີ່ສຳປະຍຸດດ້ວຍທຸກຂະເວທະນາເຊິ່ງເກີດຫຼັງ ໆ ໂດຍອະນັນຕະຣະປັດໄຈ (໑)

ສະພາວະທຳທີ່ສຳປະຍຸດດ້ວຍທຸກຂະເວທະນາເປັນປັດໄຈ ແກ່ສະພາວະທຳທີ່ສຳປະຍຸດດ້ວຍອະທຸກຂະມະສຸຂະເວທະນາໂດຍອະນັນຕະຣະປັດໄຈ ໄດ້ແກ່ ກາຍວິນຍານທີ່ປະກອບດ້ວຍທຸກເປັນປັດໄຈ ແກ່ມະໂນທາດທີ່ເປັນວິບາກໂດຍອະນັນຕະຣະປັດໄຈ ຂັນທີ່ສຳປະຍຸດດ້ວຍທຸກຂະເວທະນາເປັນປັດໄຈ ແກ່ວຸດຖານະທີ່ສຳປະຍຸດດ້ວຍອະທຸກຂະມະສຸຂະເວທະນາໂດຍອະນັນຕະຣະປັດໄຈ (໔)

[໔໗] ສະພາວະທຳທີ່ສຳປະຍຸດດ້ວຍອະທຸກຂະມະສຸຂະເວທະນາເປັນປັດໄຈແກ່ສະພາວະທຳທີ່ສຳປະຍຸດດ້ວຍອະທຸກຂະມະສຸຂະເວທະນາໂດຍອະນັນຕະຣະປັດໄຈ ໄດ້ແກ່ ຂັນທີ່ສຳປະຍຸດດ້ວຍອະທຸກຂົມສຸກຂະເວທະນາເຊິ່ງເກີດກ່ອນ ໆ ເປັນປັດໄຈແກ່ຂັນທີ່ສຳປະຍຸດດ້ວຍອະ

ທຸກຂະມະສຸຂະເວທະນາເຊິ່ງເກີດ ຫຼັງ ໆ ໂດຍອະນັນຕະຣະປັດໄຈ ອະນຸໂລມທີ່ສຳປະຍຸດດ້ວຍອະທຸກຂະມະສຸຂະເວທະນາເປັນປັດໄຈ ແກ່ໂຄຕະຣະພູທີ່ສຳປະຍຸດດ້ວຍອະທຸກຂະມະສຸຂະເວທະນາໂດຍອະນັນຕະຣະປັດໄຈ ອະນຸໂລມເປັນປັດໄຈແກ່ໂວທານ ໂຄຕະຣະພູເປັນປັດໄຈແກ່ມັກ ໂວທານເປັນປັດໄຈແກ່ມັກ ມັກເປັນປັດໄຈແກ່ຜົນ ຜົນເປັນປັດໄຈແກ່ຜົນ ອະນຸໂລມເປັນປັດໄຈແກ່ຜົນສະມາບັດ ເນວະສັນຍານາສັນຍາຍະຕະນະຂອງທ່ານ ຜູ້ອອກຈາກນິໂຣທເປັນປັດໄຈແກ່ຜົນສະມາບັດທີ່ສຳປະຍຸດດ້ວຍອະທຸກຂະມະສຸຂະເວທະນາໂດຍອະນັນຕະຣະປັດໄຈ ຂັນທີ່ສຳປະຍຸດດ້ວຍອະທຸກຂະມະສຸຂະເວທະນາເປັນປັດໄຈແກ່ວຸດຖານະທີ່ສຳປະຍຸດດ້ວຍ ອະທຸກຂະມະສຸຂະເວທະນາໂດຍອະນັນຕະຣະປັດໄຈ (໑)

ສະພາວະທຳທີ່ສຳປະຍຸດດ້ວຍອະທຸກຂະມະສຸຂະເວທະນາເປັນປັດໄຈແກ່ສະພາວະທຳທີ່ສຳປະຍຸດດ້ວຍສຸກຂະເວທະນາໂດຍອະນັນຕະຣະປັດໄຈ ໄດ້ແກ່ ຈຸຕິຈິດທີ່ສຳປະຍຸດດ້ວຍອະທຸກຂະມະສຸຂະເວທະນາເປັນປັດໄຈ ແກ່ອຸປະປັດຕິຈິດທີ່ສຳປະຍຸດດ້ວຍສຸກຂະເວທະນາໂດຍອະນັນຕະຣະປັດໄຈ ອາວັດຊະນະຈິດເປັນປັດໄຈ ແກ່ຂັນທີ່ສຳປະຍຸດດ້ວຍສຸກຂະເວທະນາໂດຍອະນັນຕະຣະປັດໄຈ ມະໂນທາດທີ່ເປັນວິບາກເປັນປັດໄຈ ແກ່ມະໂນວິນຍານທາດທີ່ເປັນວິບາກເຊິ່ງສຳປະຍຸດດ້ວຍສຸກຂະເວທະນາໂດຍອະນັນຕະຣະປັດໄຈ ພະວັງຄະຈິດທີ່ສຳປະຍຸດດ້ວຍອະທຸກຂະມະສຸຂະເວທະນາເປັນປັດໄຈ ແກ່ພະວັງຄະຈິດທີ່ສຳປະຍຸດດ້ວຍສຸກຂະເວທະນາໂດຍອະນັນຕະຣະປັດໄຈ ກຸສົນແລະອະກຸສົນທີ່ສຳປະຍຸດດ້ວຍອະທຸກຂະມະສຸຂະເວທະນາເປັນປັດໄຈແກ່ວຸດຖານະທີ່ສຳປະຍຸດດ້ວຍສຸກຂະເວທະນາ ກິຣິຍາເປັນປັດໄຈແກ່ວຸດຖານະຜົນເປັນປັດໄຈແກ່ວຸດຖານະ ເນວະສັນຍານາສັນຍາຍະຕະນະຂອງທ່ານຜູ້ອອກຈາກນິໂຣທເປັນປັດໄຈແກ່ຜົນສະມາບັດທີ່ສຳປະຍຸດດ້ວຍສຸກຂະເວທະນາໂດຍອະນັນຕະຣະປັດໄຈ (໔)

ສະພາວະທຳທີ່ສຳປະຍຸດດ້ວຍອະທຸກຂະມະສຸຂະເວທະນາເປັນປັດໄຈ ແກ່ສະພາວະທຳທີ່ສຳປະຍຸດດ້ວຍທຸກຂະເວທະນາໂດຍອະນັນຕະຣະປັດໄຈ ໄດ້ແກ່ ອາວັດຊະນະຈິດເປັນປັດໄຈແກ່ຂັນທີ່ສຳປະຍຸດດ້ວຍທຸກຂະເວທະນາໂດຍອະນັນຕະຣະປັດໄຈ (໓)

## ສະມະນັນຕະຣະປັດໄຈ

[໔໗] ສະພາວະທຳທີ່ສຳປະຍຸດດ້ວຍສຸກຂະເວທະນາເປັນປັດໄຈ ແກ່ສະພາວະທຳທີ່ສຳປະຍຸດດ້ວຍສຸກຂະເວທະນາໂດຍສະມະນັນຕະຣະປັດໄຈ (ປັດໄຈນີ້ເໝືອນກັບອະນັນຕະຣະປັດໄຈ)

## ສະຫະຊາຕະປັດໄຈ

[໔໙] ສະພາວະທຳທີ່ສຳປະຍຸດດ້ວຍສຸກຂະເວທະນາເປັນປັດໄຈ ແກ່ສະພາວະທຳທີ່ສຳ

ປະຍຸດດ້ວຍສຸກຂະເວທະນາໂດຍສະຫະຊາຕະປັດໄຈ ໄດ້ແກ່ ຂັນ ໑ ທີ່ສຳປະຍຸດດ້ວຍສຸກຂະເວທະນາເປັນປັດໄຈ ແກ່ຂັນ ໔ ໂດຍສະຫະຊາຕະປັດໄຈ ຂັນ ໔ ເປັນປັດໄຈແກ່ຂັນ ໑ ໂດຍສະຫະຊາຕະປັດໄຈ ໃນປະຕິສົນທິຂະນະ ຂັນ ໑ ທີ່ສຳປະຍຸດດ້ວຍສຸກຂະເວທະນາເປັນປັດໄຈແກ່ຂັນ ໔ ໂດຍສະຫະຊາຕະ ປັດໄຈ ຂັນ ໔ ເປັນປັດໄຈແກ່ຂັນ ໑ ໂດຍສະຫະຊາຕະປັດໄຈ (໑)

[໕໐] ສະພາວະທຳທີ່ສຳປະຍຸດດ້ວຍທຸກຂະເວທະນາເປັນປັດໄຈ ແກ່ສະພາວະທຳທີ່ສຳປະຍຸດດ້ວຍທຸກຂະເວທະນາໂດຍສະຫະຊາຕະປັດໄຈ ໄດ້ແກ່ ຂັນ ໑ ທີ່ສຳປະຍຸດດ້ວຍທຸກຂະເວທະນາເປັນປັດໄຈ ແກ່ຂັນ ໔ ໂດຍສະຫະຊາຕະປັດໄຈ ຂັນ ໔ ເປັນປັດໄຈແກ່ຂັນ ໑ ໂດຍສະຫະຊາຕະປັດໄຈ (ບໍ່ມີປະຕິສົນທິທີ່ສຳປະຍຸດດ້ວຍທຸກຂະເວທະນາ) (໑)

[໕໑] ສະພາວະທຳທີ່ສຳປະຍຸດດ້ວຍອະທຸກຂະມະສຸຂະເວທະນາເປັນປັດໄຈ ແກ່ສະພາວະທຳທີ່ສຳປະຍຸດດ້ວຍອະທຸກຂະມະສຸຂະເວທະນາໂດຍສະຫະຊາຕະປັດໄຈ ໄດ້ແກ່ ຂັນ ໑ ທີ່ສຳປະຍຸດດ້ວຍ ອະທຸກຂະມະສຸຂະເວທະນາເປັນປັດໄຈແກ່ຂັນ ໔ ໂດຍສະຫະຊາຕະປັດໄຈຂັນ ໔ ເປັນປັດໄຈແກ່ ຂັນ ໑ ໂດຍສະຫະຊາຕະປັດໄຈ ໃນປະຕິສົນທິຂະນະຂັນ ໑ ທີ່ສຳປະຍຸດດ້ວຍອະທຸກຂະມະສຸຂະເວທະນາເປັນປັດໄຈແກ່ຂັນ ໔ ໂດຍສະຫະຊາຕະປັດໄຈ ຂັນ ໔ ເປັນປັດໄຈແກ່ຂັນ ໑ ໂດຍສະຫະຊາຕະປັດໄຈ (໑)

## ອັນຍະມັນຍະປັດໄຈແລະນິດສະຍະປັດໄຈ

[໕໔] ສະພາວະທຳທີ່ສຳປະຍຸດດ້ວຍສຸກຂະເວທະນາເປັນປັດໄຈແກ່ສະພາວະທຳທີ່ສຳປະຍຸດ ດ້ວຍສຸກຂະເວທະນາໂດຍອັນຍະມັນຍະປັດໄຈເປັນປັດໄຈໂດຍນິດສະຍະປັດໄຈ (ອັນຍະມັນຍະປັດໄຈ ແລະນິດສະຍະປັດໄຈເໝືອນສະຫະຊາຕະປັດໄຈ)

## ອຸປະນິດສະຍະປັດໄຈ

[໕໓] ສະພາວະທຳທີ່ສຳປະຍຸດດ້ວຍສຸກຂະເວທະນາເປັນປັດໄຈ ແກ່ສະພາວະທຳທີ່ສຳປະຍຸດດ້ວຍສຸກຂະເວທະນາໂດຍອຸປະນິດສະຍະປັດໄຈ ມີ ໓ ຢ່າງ ຄື ອາຣຳມະນູປະນິດສະຍະ ອະນັນຕະຣູປະນິດສະຍະ ແລະປະກະຕູປະນິດສະຍະ ຯລຯ

ປະກະຕູປະນິດສະຍະ ໄດ້ແກ່ ບຸກຄົນມີຈິດທີ່ສຳປະຍຸດດ້ວຍສຸກຂະເວທະນາອາໄສສັດທາທີ່ສຳປະຍຸດດ້ວຍສຸກຂະເວທະນາແລ້ວຈຶ່ງໃຫ້ທານ ສະມາທານສິນ ຮັກສາອຸໂປສົດ ເຮັດຊານທີ່ສຳປະຍຸດດ້ວຍສຸກຂະເວທະນາໃຫ້ເກີດຂຶ້ນ ເຮັດວິປັດສະນາໃຫ້ເກີດຂຶ້ນ ເຮັດມັກໃຫ້ເກີດຂຶ້ນ (ເຮັດອະພິນຍາໃຫ້ເກີດຂຶ້ນ) ເຮັດສະມາບັດໃຫ້ເກີດຂຶ້ນ ມີມານະ ຖືທິດຖິ ບຸກຄົນອາໄສສິນທີ່ສຳປະຍຸດດ້ວຍສຸກຂະເວທະນາ ຯລຯ ສຸຕະ ຯລຯ ຈາຄະ ຯລຯ ປັນຍາ ຯລຯ ຣາຄະ ຯລຯ

ໂມຫະ ຯລຯ ມານະ ຯລຯ ທິດຖິ ຯລຯ ຄວາມປາຖະໜາ ຯລຯ ກາຍວິນຍານທີ່ປະກອບດ້ວຍສຸກ ຈຶ່ງໃຫ້ທານດ້ວຍ ຈິດທີ່ສຳປະຍຸດດ້ວຍສຸກຂະເວທະນາ ຯລຯ ເຮັດສະມາບັດໃຫ້ເກີດຂຶ້ນ (ໃນສີນ ສຸຕະ ຈາຄະ ແລະປັນຍາເຊິ່ງມີສັດທາເປັນທີ່ ໕ ເພິ່ງເພີ່ມຄຳວ່າ ມີມານະ ຖືທິດຖິ ເຂົ້າດ້ວຍໃນໝວດທຳທີ່ເຫຼືອບໍ່ຕ້ອງເພີ່ມເຂົ້າ) ບຸກຄົນມີຈິດທີ່ສຳປະຍຸດດ້ວຍສຸກຂະເວທະນາ ລັກຊັບ ເວົ້າຕົວະ ເວົ້າສັບສໍ່ ເວົ້າຄຳຫຍາບ ເວົ້າໂລເລ ງັດແງະ ປຸ້ນບໍ່ໃຫ້ເຫຼືອ ປຸ້ນເຮືອນຫຼັງດຽວ ດັກຈີ້ຢູ່ທາງປ່ຽວ ຜິດພັນລະຍາຜູ້ອື່ນ ຂ້າຊາວບ້ານ ຂ້າຊາວນິຄົມ ສັດທາທີ່ສຳປະຍຸດດ້ວຍສຸກຂະເວທະນາ ຯລຯ ສຸຕະ ຯລຯ ຈາຄະ ຯລຯ ປັນຍາ ຯລຯ ຣາຄະ ຯລຯ ໂມຫະ ຯລຯ ມານະ ຯລຯ ທິດຖິ ຯລຯ ຄວາມປາຖະໜາ ຯລຯ ກາຍວິນຍານທີ່ປະກອບດ້ວຍສຸກເປັນປັດໄຈ ແກ່ສັດທາທີ່ສຳປະຍຸດດ້ວຍສຸກຂະເວທະນາ ສີນ ຯລຯ ສຸຕະ ຯລຯ ຈາຄະ ຯລຯ ປັນຍາ ຯລຯ ຣາຄະ ຯລຯ ໂມຫະ ຯລຯ ມານະ ຯລຯ ທິດຖິ ຯລຯ ຄວາມປາຖະໜາ ຯລຯ ກາຍວິນຍານທີ່ປະກອບດ້ວຍສຸກ ຂັນທີ່ສຳປະຍຸດດ້ວຍອະທຸກຂະມະສຸຂະເວທະນາໂດຍອຸປະນິດສະຍະປັດໄຈ (໑)

ສະພາວະທຳທີ່ສຳປະຍຸດດ້ວຍສຸກຂະເວທະນາເປັນປັດໄຈ ແກ່ສະພາວະທຳທີ່ສຳປະຍຸດດ້ວຍທຸກຂະເວທະນາໂດຍອຸປະນິດສະຍະປັດໄຈ ມີຢ່າງດຽວ ຄື ປະກະຕູປະນິດສະຍະ ໄດ້ແກ່ ບຸກຄົນອາໄສສັດທາທີ່ສຳປະຍຸດດ້ວຍສຸກຂະເວທະນາ ເຮັດຕົນໃຫ້ເດືອດຮ້ອນ ໃຫ້ຮ້ອນຮົນ ສະເຫວີຍທຸກມີ ການສະແຫວງຫາເປັນມູນອາໄສສີນທີ່ສຳປະຍຸດດ້ວຍສຸກຂະເວທະນາ ຯລຯ ສຸຕະ ຯລຯ ຈາຄະ ຯລຯ ປັນຍາ ເຮັດຕົນໃຫ້ເດືອດຮ້ອນ ໃຫ້ຮ້ອນຮົນ ສະເຫວີຍທຸກມີການສະແຫວງຫາເປັນມູນອາໄສຣາຄະທີ່ສຳປະຍຸດດ້ວຍສຸກຂະເວທະນາ ຯລຯ ໂມຫະ ຯລຯ ມານະ ຯລຯ ທິດຖິ ຯລຯ ຄວາມປາຖະໜາ ຯລຯ ກາຍວິນຍານທີ່ປະກອບດ້ວຍສຸກ ຈຶ່ງຂ້າສັດ ມີຈິດສຳປະຍຸດດ້ວຍທຸກຂະເວທະນາ ລັກຊັບ ເວົ້າຕົວະ ເວົ້າສັບສໍ່ ເວົ້າຄຳຫຍາບ ເວົ້າໂລເລ ງັດແງະ ປຸ້ນບໍ່ໃຫ້ເຫຼືອ ປຸ້ນເຮືອນຫຼັງດຽວ ດັກຈີ້ຢູ່ທາງປ່ຽວ ຜິດພັນລະຍາຜູ້ອື່ນ ຂ້າຊາວບ້ານ ຂ້າຊາວນິຄົມ ຂ້າມານດາ ຂ້າບິດາ ຂ້າພຣະອະຣະຫັນ ມີຈິດປະທຸດສະຮ້າຍເຮັດພຣະໂລຫິດຂອງພຣະຕະຖາຄົດເຈົ້າໃຫ້ຫໍ້ ທຳລາຍສົງ ສັດທາທີ່ສຳປະຍຸດດ້ວຍສຸກຂະເວທະນາ ຯລຯ ສີນ ຯລຯ ສຸຕະ ຯລຯ ຈາຄະ ຯລຯ ປັນຍາ ຯລຯ ຣາຄະ ຯລຯ ໂມຫະ ຯລຯ ມານະ ຯລຯ ທິດຖິ ຯລຯ ຄວາມປາຖະໜາ ຯລຯ ກາຍວິນຍານທີ່ປະກອບດ້ວຍສຸກເປັນປັດໄຈແກ່ໂທສະ ຯລຯ ໂມຫະ ຯລຯ ກາຍວິນຍານທີ່ປະກອບດ້ວຍທຸກ ແລະຂັນທີ່ສຳປະຍຸດດ້ວຍທຸກຂະເວທະນາໂດຍອຸປະນິດສະຍະປັດໄຈ (໔)

ສະພາວະທຳທີ່ສຳປະຍຸດດ້ວຍສຸກຂະເວທະນາເປັນປັດໄຈ ແກ່ສະພາວະທຳທີ່ສຳປະຍຸດດ້ວຍອະທຸກຂະມະສຸຂະເວທະນາໂດຍອຸປະນິດສະຍະປັດໄຈ ມີ ໓ ຢ່າງ ຄື ອາຣຳມະນູປະນິດສະຍະ ອະນັນຕະຣູປະນິດສະຍະ ແລະປະກະຕູປະນິດສະຍະ ຯລຯ

ປະກະຕູປະນິດສະຍະ ໄດ້ແກ່ ບຸກຄົນມີຈິດທີ່ສຳປະຍຸດດ້ວຍອະທຸກຂະມະສຸຂະເວທະນາ ອາໄສສັດທາທີ່ສຳປະຍຸດດ້ວຍສຸກຂະເວທະນາແລ້ວຈຶ່ງໃຫ້ທານ ສະມາທານສິນ ຮັກສາອຸໂປສົດ ເຮັດຊານທີ່ສຳປະຍຸດດ້ວຍອະທຸກຂະມະສຸຂະເວທະນາໃຫ້ເກີດຂຶ້ນ ເຮັດວິປັດສະນາໃຫ້ເກີດຂຶ້ນ ເຮັດມັກໃຫ້ເກີດຂຶ້ນ ເຮັດອະພິນຍາໃຫ້ເກີດຂຶ້ນ ເຮັດສະມາບັດໃຫ້ເກີດຂຶ້ນ ມີມານະ ຖືທິດຖິອາໄສສິນທີ່ສຳປະຍຸດດ້ວຍສຸກຂະເວທະນາ ຯລຯ ສຸຕະ ຯລຯ ຈາຄະ ຯລຯ ປັນຍາ ຯລຯ ຣາຄະ ຯລຯ ໂມຫະ ຯລຯ ມານະ ຯລຯ ທິດຖິ ຯລຯ ຄວາມປາຖະໜາ ຯລຯ ກາຍວິນຍານທີ່ປະກອບດ້ວຍສຸກ ຈຶ່ງໃຫ້ທານດ້ວຍຈິດທີ່ສຳປະຍຸດດ້ວຍອະທຸກຂະມະສຸຂະເວທະນາ ຯລຯ ເຮັດສະມາບັດໃຫ້ເກີດຂຶ້ນ ລັກຊັບ ມີຈິດທີ່ສຳປະຍຸດດ້ວຍອະທຸກຂະມະສຸຂະເວທະນາ ເວົ້າຕົວະ ເວົ້າສັບສໍ່ ເວົ້າຄຳຫຍາບ ເວົ້າໂລເລ ງັດແງະ ປຸ້ນບໍ່ໃຫ້ເຫຼືອ ປຸ້ນເຮືອນຫຼັງດຽວ ດັກຈີ້ຢູ່ທາງປ່ຽວ ຜິດພັນລະຍາຜູ້ອື່ນ ຂ້າຊາວບ້ານ ຂ້າຊາວນິຄົມ ສັດທາທີ່ສຳປະຍຸດດ້ວຍສຸກຂະເວທະນາ ຯລຯ ສິນ ຯລຯ ສຸຕະ ຯລຯ ຈາຄະ ຯລຯ ປັນຍາ ຯລຯ ຣາຄະ ຯລຯ ໂມຫະ ຯລຯ ມານະ ຯລຯ ທິດຖິ ຯລຯ ຄວາມປາຖະໜາ ຯລຯ ກາຍວິນຍານທີ່ປະກອບດ້ວຍສຸກ ແລະຂັນທີ່ສຳປະຍຸດດ້ວຍອະທຸກຂະມະສຸຂະເວທະນາໂດຍອຸປະນິດສະຍະປັດໄຈ (໓)

[໕໘] ສະພາວະທຳທີ່ສຳປະຍຸດດ້ວຍທຸກຂະເວທະນາເປັນປັດໄຈແກ່ສະພາວະທຳທີ່ສຳປະຍຸດດ້ວຍທຸກຂະເວທະນາໂດຍອຸປະນິດສະຍະປັດໄຈ ມີ ໘ ຢ່າງ ຄື ອະນັນຕະຣູປະນິດສະຍະ ແລະປະກະຕູປະນິດສະຍະ ຯລຯ

ປະກະຕູປະນິດສະຍະ ໄດ້ແກ່ ບຸກຄົນອາໄສໂທສະ ຈຶ່ງຂ້າສັດ ມີຈິດທີ່ສຳປະຍຸດດ້ວຍທຸກຂະເວທະນາ ລັກຊັບ ຯລຯ ທຳລາຍສົງ ອາໄສໂມຫະ ຯລຯ ກາຍວິນຍານທີ່ປະກອບດ້ວຍທຸກ ຈຶ່ງຂ້າສັດ ມີຈິດທີ່ສຳປະຍຸດດ້ວຍທຸກຂະເວທະນາ ລັກຊັບ ຯລຯ ທຳລາຍສົງ ໂທສະ ຯລຯ ໂມຫະ ຯລຯ ກາຍວິນຍານທີ່ປະກອບດ້ວຍທຸກເປັນປັດໄຈແກ່ໂທສະ ຯລຯ ໂມຫະ ຯລຯ ກາຍວິນຍານທີ່ປະກອບດ້ວຍທຸກ ຯລຯ ຂັນທີ່ສຳປະຍຸດດ້ວຍທຸກຂະເວທະນາໂດຍອຸປະນິດສະຍະປັດໄຈ (໑)

ສະພາວະທຳທີ່ສຳປະຍຸດດ້ວຍທຸກຂະເວທະນາເປັນປັດໄຈ ແກ່ສະພາວະທຳທີ່ສຳປະຍຸດດ້ວຍສຸກຂະເວທະນາໂດຍອຸປະນິດສະຍະປັດໄຈ ມີຢ່າງດຽວ ຄື ປະກະຕູປະນິດສະຍະ ໄດ້ແກ່ ບຸກຄົນອາໄສໂທສະ ມີຈິດທີ່ສຳປະຍຸດດ້ວຍສຸກຂະເວທະນາ ຈຶ່ງໃຫ້ທານ ຯລຯ ເຮັດສະມາບັດໃຫ້ເກີດຂຶ້ນ ມີຈິດສຳປະຍຸດດ້ວຍສຸກຂະເວທະນາ ລັກຊັບ ຯລຯ ຂ້າຊາວບ້ານ ອາໄສໂມຫະ ຯລຯ ກາຍວິນຍານທີ່ປະກອບດ້ວຍທຸກ ມີຈິດທີ່ສຳປະຍຸດດ້ວຍສຸກຂະເວທະນາ ຈຶ່ງໃຫ້ທານ ຯລຯ ຂ້າຊາວນິຄົມ ໂທສະ ຯລຯ ໂມຫະ ຯລຯ ກາຍວິນຍານທີ່ປະກອບດ້ວຍທຸກເປັນປັດໄຈແກ່ສັດທາທີ່ສຳປະຍຸດດ້ວຍສຸກຂະເວທະນາ ຯລຯ ກາຍວິນຍານທີ່ປະກອບດ້ວຍສຸກ ຯລຯ ຂັນທີ່ສຳປະຍຸດດ້ວຍສຸກຂະເວທະນາ ໂດຍອຸປະນິດສະຍະປັດໄຈ (໘)

ສະພາວະທຳທີ່ສຳປະຍຸດດ້ວຍທຸກຂະເວທະນາເປັນປັດໄຈ ແກ່ສະພາວະທຳທີ່ສຳປະຍຸດດ້ວຍອະທຸກຂະມະສຸຂະເວທະນາໂດຍອຸປະນິດສະຍະປັດໄຈ ມີ ໒ ຢ່າງ ຄື ອະນັນຕະຣູປະນິດສະຍະ ແລະປະກະຕູປະນິດສະຍະ ຯລຯ

ປະກະຕູປະນິດສະຍະ ໄດ້ແກ່ ບຸກຄົນອາໄສໂທສະ ມີຈິດທີ່ສຳປະຍຸດດ້ວຍອະທຸກຂະມະສຸຂະເວທະນາ ຈຶ່ງໃຫ້ທານ ຯລຯ ຂ້າຊາວນິຄົມ ອາໄສໂມຫະ ຯລຯ ກາຍວິນຍານທີ່ປະກອບດ້ວຍທຸກ ມີຈິດທີ່ສຳປະຍຸດດ້ວຍສຸກຂະເວທະນາ ຈຶ່ງໃຫ້ທານ ຯລຯ ຂ້າຊາວນິຄົມ ໂທສະ ຯລຯ ໂມຫະ ຯລຯ ກາຍວິນຍານທີ່ປະກອບດ້ວຍທຸກເປັນປັດໄຈແກ່ສັດທາທີ່ສຳປະຍຸດດ້ວຍອະທຸກຂະມະສຸຂະເວທະນາ ຯລຯ ຄວາມປາຖະໜາ ຯລຯ ຂັນທີ່ສຳປະຍຸດດ້ວຍສຸກຂະເວທະນາໂດຍອຸປະນິດສະຍະປັດໄຈ (໓)

[໕໕] ສະພາວະທຳທີ່ສຳປະຍຸດດ້ວຍອະທຸກຂະມະສຸຂະເວທະນາເປັນປັດໄຈ ແກ່ສະພາວະທຳທີ່ສຳປະຍຸດດ້ວຍອະທຸກຂະມະສຸຂະເວທະນາໂດຍອຸປະນິດສະຍະປັດໄຈ ມີ ໓ ຢ່າງ ຄືອາຣຳມະນູປະນິດສະຍະ ອະນັນຕະຣູປະນິດສະຍະ ແລະປະກະຕູປະນິດສະຍະ ຯລຯ

ປະກະຕູປະນິດສະຍະ ໄດ້ແກ່ ບຸກຄົນອາໄສສັດທາທີ່ສຳປະຍຸດດ້ວຍອະທຸກຂະມະສຸຂະເວທະນາ ມີຈິດສຳປະຍຸດດ້ວຍອະທຸກຂະມະສຸຂະເວທະນາ ຈຶ່ງໃຫ້ທານ ຯລຯ ຖືທິດຖິ ອາໄສສີນທີ່ສຳປະຍຸດດ້ວຍອະທຸກຂະມະສຸຂະເວທະນາ ຯລຯ ສຸຕະ ຯລຯ ຈາຄະ ຯລຯ ປັນຍາ ຯລຯ ຣາຄະ ຯລຯ ໂມຫະ ຯລຯ ມານະ ຯລຯ ທິດຖິ ຯລຯ ຄວາມປາຖະໜາ ມີຈິດສຳປະຍຸດດ້ວຍອະທຸກຂະມະສຸຂະເວທະນາ ຈຶ່ງໃຫ້ທານ ຯລຯ ເຮັດສະມາບັດໃຫ້ເກີດຂຶ້ນ ມີຈິດສຳປະຍຸດດ້ວຍອະທຸກຂະມະສຸຂະເວທະນາ ລັກຊັບ ຯລຯ ຂ້າຊາວ ນິຄົມ ສັດທາທີ່ສຳປະຍຸດດ້ວຍອະທຸກຂະມະສຸຂະເວທະນາ ຯລຯ ສີນ ຯລຯ ສຸຕະ ຯລຯ ຈາຄະ ຯລຯ ປັນຍາ ຯລຯ ຣາຄະ ຯລຯ ໂມຫະ ຯລຯ ມານະ ຯລຯ ທິດຖິ ຯລຯ ຄວາມປາຖະໜາເປັນປັດໄຈ ແກ່ສັດທາທີ່ສຳປະຍຸດດ້ວຍອະທຸກຂະມະສຸຂະເວທະນາ ຯລຯ ຄວາມປາຖະໜາ ແລະຂັນທີ່ສຳປະຍຸດດ້ວຍອະທຸກຂະມະສຸຂະເວທະນາໂດຍອຸປະນິດສະຍະປັດໄຈ (໑)

ສະພາວະທຳທີ່ສຳປະຍຸດດ້ວຍອະທຸກຂະມະສຸຂະເວທະນາເປັນປັດໄຈ ແກ່ສະພາວະທຳທີ່ສຳປະຍຸດດ້ວຍສຸກຂະເວທະນາໂດຍອຸປະນິດສະຍະປັດໄຈ ມີ ໓ ຢ່າງ ຄື ອາຣຳມະນູປະນິດສະຍະອະນັນຕະຣູປະນິດສະຍະ ແລະປະກະຕູປະນິດສະຍະ ຯລຯ

ປະກະຕູປະນິດສະຍະ ໄດ້ແກ່ ບຸກຄົນອາໄສສັດທາທີ່ສຳປະຍຸດດ້ວຍອະທຸກຂະມະສຸຂະເວທະນາ ມີຈິດສຳປະຍຸດດ້ວຍສຸກຂະເວທະນາ ຈຶ່ງໃຫ້ທານ ຯລຯ ຖືທິດຖິອາໄສສີນທີ່ສຳປະຍຸດດ້ວຍ ອະທຸກຂະມະສຸຂະເວທະນາ ຯລຯ ຄວາມປາຖະໜາ ມີຈິດສຳປະຍຸດດ້ວຍສຸກຂະເວທະນາ ຈຶ່ງໃຫ້ທານ ຯລຯ ເຮັດສະມາບັດໃຫ້ເກີດຂຶ້ນ ມີຈິດສຳປະຍຸດດ້ວຍສຸກຂະເວທະນາ ລັກຊັບ

ໆລໆ ຂ້າຊາວ ນິຄົມ ສັດທາທີ່ສຳປະຍຸດດ້ວຍອະທຸກຂະມະສຸຂະເວທະນາ ໆລໆ ຄວາມປາຖະໜາ ແລະກາຍວິນຍານທີ່ປະກອບດ້ວຍສຸກເປັນປັດໄຈແກ່ສັດທາທີ່ສຳປະຍຸດດ້ວຍສຸກຂະເວທະນາ ໆລໆ ຄວາມປາຖະໜາ ໆລໆ ກາຍວິນຍານທີ່ປະກອບດ້ວຍສຸກ ໆລໆ ຂັນທີ່ສຳປະຍຸດດ້ວຍສຸກຂະເວທະນາ ໂດຍອຸປະນິດສະຍະປັດໄຈ (໔)

ສະພາວະທຳທີ່ສຳປະຍຸດດ້ວຍອະທຸກຂະມະສຸຂະເວທະນາເປັນປັດໄຈ ແກ່ສະພາວະທຳທີ່ສຳປະຍຸດດ້ວຍທຸກຂະເວທະນາໂດຍອຸປະນິດສະຍະປັດໄຈ ມີ ໔ ຢ່າງ ຄື ອະນັນຕະຣູປະນິດສະຍະ ແລະປະກະຕູປະນິດສະຍະ ໆລໆ

ປະກະຕູປະນິດສະຍະ ໄດ້ແກ່ ບຸກຄົນອາໄສສັດທາທີ່ສຳປະຍຸດດ້ວຍອະທຸກຂະມະສຸຂະເວທະນາຈຶ່ງເຮັດຕົນໃຫ້ເດືອດຮ້ອນ ໃຫ້ຮ້ອນຮົນ ສະເຫວີຍທຸກ ມີການສະແຫວງຫາເປັນມູນອາໄສສີນທີ່ສຳປະຍຸດດ້ວຍອະທຸກຂະມະສຸຂະເວທະນາ ໆລໆ ຄວາມປາຖະໜາແລ້ວຂ້າສັດມີຈິດສຳປະຍຸດດ້ວຍທຸກຂະເວທະນາ ລັກຊັບ ໆລໆ ທຳລາຍສົງ ສັດທາທີ່ສຳປະຍຸດດ້ວຍອະທຸກຂະມະສຸຂະເວທະນາ ໆລໆ ຄວາມປາຖະໜາເປັນປັດໄຈແກ່ໂທສະ ໆລໆ ໂມຫະ ໆລໆ ກາຍວິນຍານທີ່ປະກອບດ້ວຍທຸກ ໆລໆ ຂັນທີ່ສຳປະຍຸດດ້ວຍທຸກຂະເວທະນາໂດຍອຸປະນິດສະຍະປັດໄຈ (໓)

## ອາເສວະນະປັດໄຈ

[໕໖] ສະພາວະທຳທີ່ສຳປະຍຸດ ດ້ວຍສຸກຂະເວທະນາເປັນປັດໄຈ ແກ່ສະພາວະທຳທີ່ສຳປະຍຸດດ້ວຍສຸກຂະເວທະນາໂດຍອາເສວະນະປັດໄຈ ໄດ້ແກ່ ຂັນທີ່ສຳປະຍຸດດ້ວຍສຸກຂະເວທະນາເຊິ່ງເກີດກ່ອນ ໆ ເປັນປັດໄຈແກ່ຂັນທີ່ສຳປະຍຸດດ້ວຍສຸກຂະເວທະນາເຊິ່ງເກີດຫຼັງ ໆ ໂດຍອາເສວະນະປັດໄຈ ອະນຸໂລມ ທີ່ສຳປະຍຸດດ້ວຍສຸກຂະເວທະນາເປັນປັດໄຈແກ່ໂຄຕະຣະພູອະນຸໂລມເປັນປັດໄຈແກ່ໂວທານ ໂຄຕະຣະພູເປັນປັດໄຈແກ່ມັກ ໂວທານເປັນປັດໄຈແກ່ມັກໂດຍອາເສວະນະປັດໄຈ (໑)

ສະພາວະທຳທີ່ສຳປະຍຸດດ້ວຍທຸກຂະເວທະນາເປັນປັດໄຈ ແກ່ສະພາວະທຳທີ່ສຳປະຍຸດດ້ວຍທຸກຂະເວທະນາໂດຍອາເສວະນະປັດໄຈ ໄດ້ແກ່ ຂັນທີ່ສຳປະຍຸດດ້ວຍທຸກຂະເວທະນາເຊິ່ງເກີດກ່ອນ ໆ ເປັນປັດໄຈແກ່ຂັນທີ່ສຳປະຍຸດດ້ວຍທຸກຂະເວທະນາເຊິ່ງເກີດຫຼັງ ໆ ໂດຍອາເສວະນະປັດໄຈ (໑)

ສະພາວະທຳທີ່ສຳປະຍຸດດ້ວຍອະທຸກຂະມະສຸຂະເວທະນາເປັນປັດໄຈ ແກ່ສະພາວະທຳທີ່ສຳປະຍຸດດ້ວຍອະທຸກຂະມະສຸຂະເວທະນາໂດຍອາເສວະນະປັດໄຈ ໄດ້ແກ່ ຂັນທີ່ສຳປະຍຸດດ້ວຍອະທຸກຂະມະສຸຂະເວທະນາ ເຊິ່ງເກີດກ່ອນ ໆ ເປັນປັດໄຈແກ່ຂັນທີ່ສຳປະຍຸດດ້ວຍອະທຸກ

ຂະມະສຸຂະເວທະນາເຊິ່ງເກີດຫຼັງ ໆ ໂດຍອາເສວະນະປັດໄຈ ອະນຸໂລມທີ່ສຳປະຍຸດດ້ວຍອະທຸກຂະມະສຸຂະເວທະນາເປັນປັດໄຈແກ່ໂຄຕະຣະພູ ອະນຸໂລມເປັນປັດໄຈແກ່ໂວທານ ໂຄຕະຣະພູເປັນປັດໄຈແກ່ມັກໂວທານເປັນປັດໄຈ ແກ່ມັກໂດຍອາເສວະນະປັດໄຈ (໑)

## ກຳມະປັດໄຈ

[໔ກ] ສະພາວະທຳທີ່ສຳປະຍຸດດ້ວຍສຸກຂະເວທະນາເປັນປັດໄຈ ແກ່ສະພາວະທຳທີ່ສຳປະຍຸດດ້ວຍສຸກຂະເວທະນາໂດຍກຳມະປັດໄຈ ມີ ໔ ຢ່າງ ຄື ສະຫະຊາຕະແລະນານາຂະນິກະ

ສະຫະຊາຕະ ໄດ້ແກ່ ເຈດຕະນາທີ່ສຳປະຍຸດດ້ວຍສຸກຂະເວທະນາເປັນປັດໄຈແກ່ສຳປະຍຸດຕະຂັນໂດຍກຳມະປັດໄຈ ໃນປະຕິສົນທິຂະນະ ༧ລ༧

ນານາຂະນິກະ ໄດ້ແກ່ ເຈດຕະນາທີ່ສຳປະຍຸດດ້ວຍສຸກຂະເວທະນາເປັນປັດໄຈແກ່ຂັນທີ່ເປັນວິບາກເຊິ່ງສຳປະຍຸດດ້ວຍສຸກຂະເວທະນາໂດຍກຳມະປັດໄຈ (໑)

ສະພາວະທຳທີ່ສຳປະຍຸດດ້ວຍສຸກຂະເວທະນາເປັນປັດໄຈ ແກ່ສະພາວະທຳທີ່ສຳປະຍຸດດ້ວຍທຸກຂະເວທະນາໂດຍກຳມະປັດໄຈ ມີຢ່າງດຽວ ຄື ນານາຂະນິກະ ໄດ້ແກ່ ເຈດຕະນາທີ່ສຳປະຍຸດດ້ວຍສຸກຂະເວທະນາເປັນປັດໄຈ ແກ່ຂັນທີ່ເປັນວິບາກເຊິ່ງສຳປະຍຸດດ້ວຍທຸກຂະເວທະນາໂດຍກຳມະປັດໄຈ (໔)

ສະພາວະທຳທີ່ສຳປະຍຸດດ້ວຍສຸກຂະເວທະນາເປັນປັດໄຈ ແກ່ສະພາວະທຳທີ່ສຳປະຍຸດດ້ວຍອະທຸກຂະມະສຸຂະເວທະນາໂດຍກຳມະປັດໄຈ ມີຢ່າງດຽວ ຄື ນານາຂະນິກະ ໄດ້ແກ່ ເຈດຕະນາທີ່ສຳປະຍຸດດ້ວຍສຸກຂະເວທະນາເປັນປັດໄຈ ແກ່ຂັນທີ່ເປັນວິບາກເຊິ່ງສຳປະຍຸດດ້ວຍອະທຸກຂະມະສຸຂະເວທະນາໂດຍກຳມະປັດໄຈ (໓)

[໔ຂ] ສະພາວະທຳທີ່ສຳປະຍຸດດ້ວຍທຸກຂະເວທະນາເປັນປັດໄຈ ແກ່ສະພາວະທຳທີ່ສຳປະຍຸດດ້ວຍທຸກຂະເວທະນາໂດຍກຳມະປັດໄຈ ມີ ໔ ຢ່າງ ຄື ສະຫະຊາຕະແລະນານາຂະນິກະ

ສະຫະຊາຕະ ໄດ້ແກ່ ເຈດຕະນາທີ່ສຳປະຍຸດດ້ວຍທຸກຂະເວທະນາເປັນປັດໄຈແກ່ສຳປະຍຸດຕະຂັນໂດຍກຳມະປັດໄຈ

ນານາຂະນິກະ ໄດ້ແກ່ ເຈດຕະນາທີ່ສຳປະຍຸດດ້ວຍທຸກຂະເວທະນາເປັນປັດໄຈແກ່ຂັນທີ່ເປັນວິບາກເຊິ່ງສຳປະຍຸດດ້ວຍທຸກຂະເວທະນາໂດຍກຳມະປັດໄຈ (໑)

ສະພາວະທຳທີ່ສຳປະຍຸດດ້ວຍທຸກຂະເວທະນາເປັນປັດໄຈ ແກ່ສະພາວະທຳທີ່ສຳປະຍຸດດ້ວຍອະທຸກຂະມະສຸຂະເວທະນາໂດຍກຳມະປັດໄຈ ມີຢ່າງດຽວ ຄື ນານາຂະນິກະ ໄດ້ແກ່ ເຈດຕະນາທີ່ສຳປະຍຸດດ້ວຍທຸກຂະເວທະນາເປັນປັດໄຈ ແກ່ຂັນທີ່ເປັນວິບາກເຊິ່ງສຳປະຍຸດດ້ວຍອະທຸກຂະມະສຸຂະເວທະນາ ໂດຍກຳມະປັດໄຈ (໔)

[໕໙] ສະພາວະທຳທີ່ສຳປະຍຸດດ້ວຍອະທຸກຂະມະສຸຂະເວທະນາເປັນປັດໄຈ ແກ່ສະພາວະທຳທີ່ສຳປະຍຸດດ້ວຍອະທຸກຂະມະສຸຂະເວທະນາໂດຍກຳມະປັດໄຈ ມີ ໒ ຢ່າງ ຄື ສະຫະຊາຕະ ແລະນານາຂະນິກະ

ສະຫະຊາຕະ ໄດ້ແກ່ ເຈດຕະນາທີ່ສຳປະຍຸດດ້ວຍອະທຸກຂະມະສຸຂະເວທະນາເປັນປັດໄຈແກ່ ສຳປະຍຸດຕະຂັນໂດຍກຳມະປັດໄຈ ໃນປະຕິສົນທິຂະນະ ຯລຯ

ນານາຂະນິກະ ໄດ້ແກ່ ເຈດຕະນາທີ່ສຳປະຍຸດດ້ວຍອະທຸກຂະມະສຸຂະເວທະນາເປັນປັດໄຈແກ່ຂັນທີ່ເປັນວິບາກ ເຊິ່ງສຳປະຍຸດດ້ວຍອະທຸກຂະມະສຸຂະເວທະນາໂດຍກຳມະປັດໄຈ (໑)

ສະພາວະທຳທີ່ສຳປະຍຸດດ້ວຍອະທຸກຂະມະສຸຂະເວທະນາເປັນປັດໄຈ ແກ່ສະພາວະທຳທີ່ສຳປະຍຸດດ້ວຍສຸກຂະເວທະນາໂດຍກຳມະປັດໄຈ ມີຢ່າງດຽວ ຄື ນານາຂະນິກະ ໄດ້ແກ່ເຈດຕະນາທີ່ສຳປະຍຸດດ້ວຍອະທຸກຂະມະສຸຂະເວທະນາເປັນປັດໄຈ ແກ່ຂັນທີ່ເປັນວິບາກເຊິ່ງສຳປະຍຸດດ້ວຍສຸກຂະເວທະນາໂດຍກຳມະປັດໄຈ (໒)

ສະພາວະທຳທີ່ສຳປະຍຸດດ້ວຍອະທຸກຂະມະສຸຂະເວທະນາເປັນປັດໄຈ ແກ່ສະພາວະທຳທີ່ສຳປະຍຸດດ້ວຍທຸກຂະເວທະນາໂດຍກຳມະປັດໄຈ ມີຢ່າງດຽວ ຄື ນານາຂະນິກະ ໄດ້ແກ່ເຈດຕະນາທີ່ສຳປະຍຸດດ້ວຍອະທຸກຂະມະສຸຂະເວທະນາເປັນປັດໄຈ ແກ່ຂັນທີ່ເປັນວິບາກເຊິ່ງສຳປະຍຸດດ້ວຍທຸກຂະເວທະນາ ໂດຍກຳມະປັດໄຈ (໓)

## ວິປາກະປັດໄຈ

[໖໐] ສະພາວະທຳທີ່ສຳປະຍຸດດ້ວຍສຸກຂະເວທະນາເປັນປັດໄຈ ແກ່ສະພາວະທຳທີ່ສຳປະຍຸດດ້ວຍສຸກຂະເວທະນາໂດຍວິປາກະປັດໄຈ ໄດ້ແກ່ ຂັນ ໑ ທີ່ເປັນວິບາກເຊິ່ງສຳປະຍຸດດ້ວຍສຸກຂະເວທະນາ ເປັນປັດໄຈແກ່ຂັນ ໒ ໂດຍວິປາກະປັດໄຈ ຂັນ ໒ ເປັນປັດໄຈແກ່ຂັນ ໑ ໂດຍ ວິປາກະປັດໄຈ ໃນປະຕິສົນທິຂະນະ ຂັນ ໑ ທີ່ສຳປະຍຸດດ້ວຍສຸກຂະເວທະນາເປັນປັດໄຈແກ່ຂັນ ໒ ໂດຍວິປາກະປັດໄຈ ຂັນ ໒ ເປັນປັດໄຈແກ່ຂັນ ໑ ຯລຯ (໑)

ສະພາວະທຳທີ່ສຳປະຍຸດດ້ວຍທຸກຂະເວທະນາເປັນປັດໄຈ ແກ່ສະພາວະທຳທີ່ສຳປະຍຸດດ້ວຍທຸກຂະເວທະນາໂດຍວິປາກະປັດໄຈ ໄດ້ແກ່ ຂັນ ໑ ທີ່ເປັນວິບາກເຊິ່ງສຳປະຍຸດດ້ວຍທຸກຂະເວທະນາ ເປັນປັດໄຈແກ່ຂັນ ໒ ໂດຍວິປາກະປັດໄຈ ຯລຯ (໑)

ສະພາວະທຳທີ່ສຳປະຍຸດດ້ວຍອະທຸກຂະມະສຸຂະເວທະນາ ຯລຯ ຂັນ ໑ ທີ່ເປັນວິບາກເຊິ່ງສຳປະຍຸດດ້ວຍອະທຸກຂະມະສຸຂະເວທະນາເປັນປັດໄຈແກ່ຂັນ ໒ ຯລຯ ໃນປະຕິສົນທິຂະນະ ຯລຯ (໑)

## ອາຫານະປັດໄຈເປັນຕົ້ນ

[໖໑] ສະພາວະທຳທີ່ສຳປະຍຸດດ້ວຍສຸກຂະເວທະນາເປັນປັດໄຈ ແກ່ສະພາວະທຳທີ່ສຳປະຍຸດດ້ວຍສຸກຂະເວທະນາໂດຍອາຫານະປັດໄຈ ຯລຯ ເປັນປັດໄຈໂດຍອິນທະຣິຍະປັດໄຈ ຯລຯ ເປັນປັດໄຈໂດຍຊານະປັດໄຈ ຯລຯ ເປັນປັດໄຈໂດຍມັກຄະປັດໄຈ ຯລຯ ເປັນປັດໄຈໂດຍ ສຳປະຍຸດຕະປັດໄຈ ຯລຯ ເປັນປັດໄຈໂດຍອັດຖິປັດໄຈ ຯລຯ ເປັນປັດໄຈໂດຍນັດຖິປັດໄຈ ຯລຯ ເປັນປັດໄຈໂດຍວິຄະຕະປັດໄຈ ຯລຯ ເປັນປັດໄຈໂດຍອະວິຄະຕະປັດໄຈ ຯລຯ

# ໑. ປັດຈະຍານຸໂລມະ ໔. ສັງຂະຍາວາຣະ

## ສຸດທະໄນ

| | |
|---|---|
| [໖໔] ເຫຕຸປັດໄຈ | ມີ ၍ ວາຣະ |
| ອາຣຳມະນະປັດໄຈ | ມີ ໙ ວາຣະ |
| ອະທິປະຕິປັດໄຈ | ມີ ໕ ວາຣະ |
| ອະນັນຕະຣະປັດໄຈ | ມີ ໗ ວາຣະ |
| ສະມະນັນຕະຣະປັດໄຈ | ມີ ໗ ວາຣະ |
| ສະຫະຊາຕະປັດໄຈ | ມີ ၍ ວາຣະ |
| ອັນຍະມັນຍະປັດໄຈ | ມີ ၍ ວາຣະ |
| ນິດສະຍະປັດໄຈ | ມີ ၍ ວາຣະ |
| ອຸປະນິດສະຍະປັດໄຈ | ມີ ໙ ວາຣະ |
| ອາເສວະນະປັດໄຈ | ມີ ၍ ວາຣະ |
| ກຳມະປັດໄຈ | ມີ ໘ ວາຣະ |
| ວິປາກະປັດໄຈ | ມີ ၍ ວາຣະ |
| ອາຫານະປັດໄຈ | ມີ ၍ ວາຣະ |
| ອິນຊີຍະປັດໄຈ | ມີ ၍ ວາຣະ |
| ຊານະປັດໄຈ | ມີ ၍ ວາຣະ |
| ມັກຄະປັດໄຈ | ມີ ၍ ວາຣະ |
| ສຳປະຍຸດຕະປັດໄຈ | ມີ ၍ ວາຣະ |
| ອັດຖິປັດໄຈ | ມີ ၍ ວາຣະ |
| ນັດຖິປັດໄຈ | ມີ ໗ ວາຣະ |
| ວິຄະຕະປັດໄຈ | ມີ ໗ ວາຣະ |
| ອະວິຄະຕະປັດໄຈ | ມີ ၍ ວາຣະ |

## ເຫຕຸສະພາຄະໄນ

| | | |
|---|---|---|
| [໖໓] ອະທິປະຕິປັດໄຈ | ກັບເຫຕຸປັດໄຈ | ມີ ໔ ວາຣະ |
| ສະຫະຊາຕະປັດໄຈ | ,, | ມີ ໓ ວາຣະ |
| ອັນຍະມັນຍະປັດໄຈ | ,, | ມີ ໓ ວາຣະ |
| ນິດສະຍະປັດໄຈ | ,, | ມີ ໓ ວາຣະ |
| ວິປາກະປັດໄຈ | ,, | ມີ ໔ ວາຣະ |
| ອິນຊີຍະປັດໄຈ | ,, | ມີ ໔ ວາຣະ |
| ມັກຄະປັດໄຈ | ,, | ມີ ໔ ວາຣະ |
| ສຳປະຍຸດຕະປັດໄຈ | ,, | ມີ ໓ ວາຣະ |
| ອັດຖິປັດໄຈ | ,, | ມີ ໓ ວາຣະ |
| ອະວິຄະຕະປັດໄຈ | ,, | ມີ ໓ ວາຣະ |

## ສາມັນຍະຄະຕະນາ (໔)

ປັດໄຈ ໗ ຄື ເຫຕຸ ສະຫະຊາຕະ ອັນຍະມັນຍະ ນິດສະຍະ ສຳປະຍຸດຕະ ອັດຖິ ແລະ ອະວິຄະຕະ ມີ ໓ ວາຣະ

ປັດໄຈ ໘ ຄື ເຫຕຸ ສະຫະຊາຕະ ອັນຍະມັນຍະ ນິດສະຍະ ວິປາກະ ສຳປະຍຸດຕະ ອັດຖິ ແລະອະວິຄະຕະ ມີ ໔ ວາຣະ

## ສະອິນທະຣິຍະມັກຄະຄະຕະນາ (໔)

[໖໔] ປັດໄຈ ໙ ຄື ເຫຕຸ ສະຫະຊາຕະ ອັນຍະມັນຍະ ນິດສະຍະ ອິນທະຣິຍະ ມັກຄະ ສຳປະຍຸດຕະ ອັດຖິ ແລະອະວິຄະຕະ ມີ ໔ ວາຣະ

ປັດໄຈ ໑໐ ຄື ເຫຕຸ ສະຫະຊາຕະ ອັນຍະມັນຍະ ນິດສະຍະ ວິປາກະ ອິນທະຣິຍະ ມັກຄະ ສຳປະຍຸດຕະ ອັດຖິ ແລະອະວິຄະຕະ ມີ ໔ ວາຣະ

## ສາທິປະຕິອິນທະຣິຍະມັກຄະຄະຕະນາ (໔)

[໖໕] ປັດໄຈ ໑໐ ຄື ເຫຕຸ ອະທິປະຕິ ສະຫະຊາຕະ ອັນຍະມັນຍະ ນິດສະຍະ ອິນທະຣິຍະ ມັກຄະ ສຳປະຍຸດຕະ ອັດຖິ ແລະອະວິຄະຕະ ມີ ໔ ວາຣະ

ປັດໄຈ ໑໑ ຄື ເຫຕຸ ອະທິປະຕິ ສະຫະຊາຕະ ອັນຍະມັນຍະ ນິດສະຍະ ວິປາກະ ອິນທະຣິຍະ ມັກຄະ ສຳປະຍຸດຕະ ອັດຖິ ແລະອະວິຄະຕະ ມີ ໔ ວາຣະ

## ອາຣຳມະນະສະພາຄະໄນ

| | | |
|---|---|---|
| [໖໖] ອະທິປະຕິປັດໄຈ | ກັບອາຣຳມະນະປັດໄຈ | ມີ ໔ ວາຣະ |
| ອຸປະນິດສະຍະປັດໄຈ | ,, | ມີ ໔ ວາຣະ |

## ອາຣຳມະນະຄະຕະນາ (໑)

[໖໗] ປັດໄຈ ໓ ຄື ອາຣຳມະນະ ອະທິປະຕິ ແລະອຸປະນິດສະຍະ ມີ ໔ ວາຣະ

## ອະທິປະຕິສະພາຄະໄນ

| | | |
|---|---|---|
| [໖໘] ເຫຕຸປັດໄຈ | ກັບອະທິປະຕິປັດໄຈ | ມີ ໔ ວາຣະ |
| ອາຣຳມະນະປັດໄຈ | ,, | ມີ ໔ ວາຣະ |
| ສະຫະຊາຕະປັດໄຈ | ,, | ມີ ໓ ວາຣະ |
| ອັນຍະມັນຍະປັດໄຈ | ,, | ມີ ໓ ວາຣະ |
| ນິດສະຍະປັດໄຈ | ,, | ມີ ໓ ວາຣະ |
| ອຸປະນິດສະຍະປັດໄຈ | ,, | ມີ ໔ ວາຣະ |
| ວິປາກະປັດໄຈ | ,, | ມີ ໔ ວາຣະ |
| ອາຫາຣະປັດໄຈ | ,, | ມີ ໓ ວາຣະ |
| ອິນຊີຍະປັດໄຈ | ,, | ມີ ໓ ວາຣະ |
| ມັກຄະປັດໄຈ | ,, | ມີ ໓ ວາຣະ |
| ສຳປະຍຸດຕະປັດໄຈ | ,, | ມີ ໓ ວາຣະ |
| ອັດຖິປັດໄຈ | ,, | ມີ ໓ ວາຣະ |
| ອະວິຄະຕະປັດໄຈ | ,, | ມີ ໓ ວາຣະ (໑໓) |

## ອະທິປະຕິຄະຕະນາ (໗)

[໖໙] ປັດໄຈ ໓ ຄື ອະທິປະຕິ ອາຣຳມະນະ ແລະອຸປະນິດສະຍະມີ ໔ ວາຣະ

ປັດໄຈ ໗ ຄື ອະທິປະຕິ ສະຫະຊາຕະ ອັນຍະມັນຍະ ນິດສະຍະ ສຳປະຍຸດຕະ ອັດຖິ ແລະອະວິຄະຕະ ມີ ໓ ວາຣະ

ປັດໄຈ ໗ ຄື ອະທິປະຕິ ສະຫະຊາຕະ ອັນຍະມັນຍະ ນິດສະຍະ ວິປາກະ ສຳປະຍຸດຕະ ອັດຖິ ແລະອະວິຄະຕະ ມີ ໔ ວາຣະ

ປັດໄຈ ໙ ຄື ອະທິປະຕິ ສະຫະຊາຕະ ອັນຍະມັນຍະ ນິດສະຍະ ອາຫາຣະ ອິນທະຣິຍະ ສຳປະຍຸດຕະ ອັດຖິ ແລະອະວິຄະຕະ ມີ ໓ ວາຣະ

ປັດໄຈ ໑໐ ຄື ອະທິປະຕິ ສະຫະຊາຕະ ອັນຍະມັນຍະ ນິດສະຍະ ວິປາກະ ອາຫາຣະ ອິນທະຣິຍະ ສຳປະຍຸດຕະ ອັດຖິ ແລະອະວິຄະຕະ ມີ ໔ ວາຣະ

ປັດໄຈ ໙ ຄື ອະທິປະຕິ ສະຫະຊາຕະ ອັນຍະມັນຍະ ນິດສະຍະ ອິນທະຣິຍະ ມັກຄະ ສຳປະຍຸດຕະ ອັດຖິ ແລະອະວິຄະຕະ ມີ ๖ ວາຣະ

ປັດໄຈ ໑໐ ຄື ອະທິປະຕິ ສະຫະຊາຕະ ອັນຍະມັນຍະ ນິດສະຍະ ວິປາກະ ອິນທະຣິຍະ ມັກຄະ ສຳປະຍຸດຕະ ອັດຖິ ແລະອະວິຄະຕະ ມີ ໔ ວາຣະ

ປັດໄຈ ໑໐ ຄື ອະທິປະຕິ ເຫຕຸ ສະຫະຊາຕະ ອັນຍະມັນຍະ ນິດສະຍະ ອິນທະຣິຍະ ມັກຄະ ສຳປະຍຸດຕະ ອັດຖິ ແລະອະວິຄະຕະ ມີ ໔ ວາຣະ

ປັດໄຈ ໑໑ ຄື ອະທິປະຕິ ເຫຕຸ ສະຫະຊາຕະ ອັນຍະມັນຍະ ນິດສະຍະ ວິປາກະ ອິນທະຣິຍະ ມັກຄະ ສຳປະຍຸດຕະ ອັດຖິ ແລະອະວິຄະຕະ ມີ ໔ ວາຣະ

## ອະນັນຕະຣະສະພາຄະໄນ

| | | |
|---|---|---|
| [໗໐] ສະມະນັນຕະຣະປັດໄຈ ກັບອະນັນຕະຣະປັດໄຈ | | ມີ ໗ ວາຣະ |
| ອຸປະນິດສະຍະປັດໄຈ | ,, | ມີ ໗ ວາຣະ |
| ອາເສວະນະປັດໄຈ | ,, | ມີ ໖ ວາຣະ |
| ກຳມະປັດໄຈ | ,, | ມີ ໔ ວາຣະ |
| ນັດຖິປັດໄຈ | ,, | ມີ ໗ ວາຣະ |
| ວິຄະຕະປັດໄຈ | ,, | ມີ ໗ ວາຣະ (໖) |

## ຄະຕະນາ (໖)

[໗໑] ປັດໄຈ ໕ ຄື ອະນັນຕະຣະ ສະມະນັນຕະຣະ ອຸປະນິດສະຍະ ນັດຖິ ແລະວິຄະຕະ ມີ ໗ ວາຣະ

ປັດໄຈ ໖ ຄື ອະນັນຕະຣະ ສະມະນັນຕະຣະ ອຸປະນິດສະຍະ ອາເສວະນະ ນັດຖິ ແລະວິຄະຕະ ມີ ໖ ວາຣະ

ປັດໄຈ ໖ ຄື ອະນັນຕະຣະ ສະມະນັນຕະຣະ ອຸປະນິດສະຍະ ກຳມະ ນັດຖິ ແລະວິຄະຕະ ມີ ໔ ວາຣະ

໗໒໗ ກັບສະມະນັນຕະຣະປັດໄຈ (ປັດໄຈນີ້ເໝືອນກັບອະນັນຕະຣະປັດໄຈ)

## ສະພາຄະໄນມີສະຫະຊາຕະປັດໄຈເປັນຕົ້ນ

[໗໔] ເຫຕຸປັດໄຈ ກັບສະຫະຊາຕະປັດໄຈ ອັນຍະມັນຍະປັດໄຈ ແລະນິດສະຍະປັດໄຈ ມີ ໖ ວາຣະ

| | | |
|---|---|---|
| ອະທິປະຕິປັດໄຈ | ກັບ ໆລໆ | ມີ ໓ ວາຣະ |
| ສະຫະຊາຕະປັດໄຈ | ກັບ ໆລໆ | ມີ ໓ ວາຣະ |
| ອັນຍະມັນຍະປັດໄຈ | ກັບ ໆລໆ | ມີ ໓ ວາຣະ |
| ກຳມະປັດໄຈ | ກັບ ໆລໆ | ມີ ໓ ວາຣະ |
| ວິປາກະປັດໄຈ | ກັບ ໆລໆ | ມີ ໓ ວາຣະ |
| ອາຫາຣະປັດໄຈ | ກັບ ໆລໆ | ມີ ໓ ວາຣະ |
| ອິນຊີຍະປັດໄຈ | ກັບ ໆລໆ | ມີ ໓ ວາຣະ |
| ຊານະປັດໄຈ | ກັບ ໆລໆ | ມີ ໓ ວາຣະ |
| ມັກຄະປັດໄຈ | ກັບ ໆລໆ | ມີ ໓ ວາຣະ |
| ສຳປະຍຸດຕະປັດໄຈ | ກັບ ໆລໆ | ມີ ໓ ວາຣະ |
| ອັດຖິປັດໄຈ | ກັບ ໆລໆ | ມີ ໓ ວາຣະ |
| ອະວິຄະຕະປັດໄຈ | ກັບ ໆລໆ | ມີ ໓ ວາຣະ (໑໓) |

## ຄະຕະນາ (໔)

ປັດໄຈ ໖ ຄື ນິດສະຍະ ສະຫະຊາຕະ ອັນຍະມັນຍະ ສຳປະຍຸດຕະ ອັດຖິ ແລະອະວິຄະຕະ ມີ ໓ ວາຣະ

ປັດໄຈ ໗ ຄື ນິດສະຍະ ສະຫະຊາຕະ ອັນຍະມັນຍະ ວິປາກະ ສຳປະຍຸດຕະ ອັດຖິ ແລະອະວິຄະຕະ ມີ ໓ ວາຣະ

## ອຸປະນິດສະຍະສະພາຄະໄນ

| | | |
|---|---|---|
| [໗໓] ອາຣຳມະນະປັດໄຈ | ກັບອຸປະນິດສະຍະປັດໄຈ | ມີ ໔ ວາຣະ |
| ອະທິປະຕິປັດໄຈ | ,, | ມີ ໔ ວາຣະ |
| ອະນັນຕະຣະປັດໄຈ | ,, | ມີ ໗ ວາຣະ |
| ສະມະນັນຕະຣະປັດໄຈ | ,, | ມີ ໗ ວາຣະ |
| ອາເສວະນະປັດໄຈ | ,, | ມີ ໓ ວາຣະ |
| ກຳມະປັດໄຈ | ,, | ມີ ໘ ວາຣະ |
| ນັດຖິປັດໄຈ | ,, | ມີ ໗ ວາຣະ |
| ວິຄະຕະປັດໄຈ | ,, | ມີ ໗ ວາຣະ (໘) |

## ຄະຕະນາ (໕)

[໗໔] ປັດໄຈ ໓ ຄື ອຸປະນິດສະຍະ ອາຣຳມະນະ ແລະອະທິປະຕິ ມີ ໔ ວາຣະ

ປັດໄຈ ໕ ຄື ອຸປະນິດສະຍະ ອະນັນຕະຣະ ສະມະນັນຕະຣະ ນັດຖິ ແລະວິຄະຕະ ມີ ໗ ວາຣະ

ປັດໄຈ ໖ ຄື ອຸປະນິດສະຍະ ອະນັນຕະຣະ ສະມະນັນຕະຣະ ອາເສວະນະ ນັດຖິ ແລະ ວິຄະຕະ ມີ ໖ ວາຣະ

ປັດໄຈ ໔ ຄື ອຸປະນິດສະຍະ ແລະກຳມະ ມີ ໙ ວາຣະ

ປັດໄຈ ໖ ຄື ອຸປະນິດສະຍະ ອະນັນຕະຣະ ສະມະນັນຕະຣະ ກຳມະ ນັດຖິ ແລະວິຄະຕະ ມີ ໔ ວາຣະ

## ອາເສວະນະສະພາຄະໄນ

| | | |
|---|---|---|
| [໗໕] ອະນັນຕະຣະປັດໄຈ | ກັບອາເສວະນະປັດໄຈ | ມີ ໖ ວາຣະ |
| ສະມະນັນຕະຣະປັດໄຈ | | ມີ ໖ ວາຣະ |
| ອຸປະນິດສະຍະປັດໄຈ | | ມີ ໖ ວາຣະ |
| ນັດຖິປັດໄຈ | | ມີ ໖ ວາຣະ |
| ວິຄະຕະປັດໄຈ | | ມີ ໖ ວາຣະ (໕) |

## ຄະຕະນາ (໑)

ປັດໄຈ ໖ ຄື ອາເສວະນະ ອະນັນຕະຣະ ສະມະນັນຕະຣະ ອຸປະນິດສະຍະ ນັດຖິ ແລະ ວິຄະຕະ ມີ ໖ ວາຣະ

## ກຳມະສະພາຄະໄນ

| | | |
|---|---|---|
| [໗໖] ອະນັນຕະຣະປັດໄຈ | ກັບກຳມະປັດໄຈ | ມີ ໔ ວາຣະ |
| ສະມະນັນຕະຣະປັດໄຈ | ,, | ມີ ໔ ວາຣະ |
| ສະຫະຊາຕະປັດໄຈ | ,, | ມີ ໖ ວາຣະ |
| ອັນຍະມັນຍະປັດໄຈ | ,, | ມີ ໖ ວາຣະ |
| ນິດສະຍະປັດໄຈ | ,, | ມີ ໖ ວາຣະ |
| ອຸປະນິດສະຍະປັດໄຈ | ,, | ມີ ໙ ວາຣະ |
| ວິປາກະປັດໄຈ | ,, | ມີ ໖ ວາຣະ |
| ອາຫາຣະປັດໄຈ | ,, | ມີ ໖ ວາຣະ |
| ສຳປະຍຸດຕະປັດໄຈ | ,, | ມີ ໖ ວາຣະ |
| ອັດຖິປັດໄຈ | ,, | ມີ ໖ ວາຣະ |

| | | |
|---|---|---|
| ນັດຖິປັດໄຈ | ,, | ມີ ໔ ວາຣະ |
| ວິຄະຕະປັດໄຈ | ,, | ມີ ໔ ວາຣະ |
| ອະວິຄະຕະປັດໄຈ | ,, | ມີ ໓ ວາຣະ (໑໓) |

## ຄະຕະນາ (໔)

ປັດໄຈ ໔ ຄື ກຳມະ ແລະອຸປະນິດສະຍະ ມີ ໗ ວາຣະ

ປັດໄຈ ໖ ຄື ກຳມະ ອະນັນຕະຣະ ສະມະນັນຕະຣະ ອຸປະນິດສະຍະ ນັດຖິ ແລະອະວິຄະຕະ ມີ ໔ ວາຣະ

ປັດໄຈ ໗ ຄື ກຳມະ ສະຫະຊາຕະ ອັນຍະມັນຍະ ນິດສະຍະ ອາຫາຣະ ສຳປະຍຸດຕະ ອັດຖິ ແລະອະວິຄະຕະ ມີ ໓ ວາຣະ

ປັດໄຈ ໙ ຄື ກຳມະ ສະຫະຊາຕະ ອັນຍະມັນຍະ ນິດສະຍະ ວິປາກະ ອາຫາຣະ ສຳປະຍຸດຕະ ອັດຖິ ແລະອະວິຄະຕະ ມີ ໓ ວາຣະ

## ວິປາກະສະພາຄະໄນ

| | | |
|---|---|---|
| [ກກ] ເຫຕຸປັດໄຈ | ກັບວິປາກະປັດໄຈ | ມີ ໔ ວາຣະ |
| ອະທິປະຕິປັດໄຈ | ,, | ມີ ໔ ວາຣະ |
| ສະຫະຊາຕະປັດໄຈ | ,, | ມີ ໓ ວາຣະ ໗ລ໗ |
| ຊານະປັດໄຈ | ,, | ມີ ໔ ວາຣະ |
| ມັກຄະປັດໄຈ | ,, | ມີ ໔ ວາຣະ |
| ສຳປະຍຸດຕະປັດໄຈ | ,, | ມີ ໓ ວາຣະ |
| ອັດຖິປັດໄຈ | ,, | ມີ ໓ ວາຣະ |
| ອະວິຄະຕະປັດໄຈ | ,, | ມີ ໓ ວາຣະ (໑໓) |

## ຄະຕະນາ (໑)

ປັດໄຈ ກ ຄື ວິປາກະ ສະຫະຊາຕະ ອັນຍະມັນຍະ ນິດສະຍະ ສຳປະຍຸດຕະ ອັດຖິ ແລະອະວິຄະຕະ ມີ ໓ ວາຣະ

## ອາຫາຣະສະພາຄະໄນ

| | | |
|---|---|---|
| [ກ໗] ອະທິປະຕິປັດໄຈ | ກັບອາຫາຣະປັດໄຈ | ມີ ໓ ວາຣະ |
| ສະຫະຊາຕະປັດໄຈ | ,, | ມີ ໓ ວາຣະ |

| | | |
|---|---|---|
| ອັນຍະມັນຍະປັດໄຈ | ,, | ມີ ໓ ວາຣະ |
| ນິດສະຍະປັດໄຈ | ,, | ມີ ໓ ວາຣະ |
| ກໍາມະປັດໄຈ | ,, | ມີ ໓ ວາຣະ |
| ວິປາກະປັດໄຈ | ,, | ມີ ໓ ວາຣະ |
| ອິນຊີຍະປັດໄຈ | ,, | ມີ ໓ ວາຣະ |
| ສໍາປະຍຸດຕະປັດໄຈ | ,, | ມີ ໓ ວາຣະ |
| ອັດຖິປັດໄຈ | ,, | ມີ ໓ ວາຣະ |
| ອະວິຄະຕະປັດໄຈ | ,, | ມີ ໓ ວາຣະ (໑໐) |

## ຄະຕະນາ (໗)

ປັດໄຈ ໗ ຄື ອາຫາຣະ ສະຫະຊາຕະ ອັນຍະມັນຍະ ນິດສະຍະ ສໍາປະຍຸດຕະ ອັດຖິ ແລະອະວິຄະຕະ ມີ ໓ ວາຣະ

ປັດໄຈ ໘ ຄື ອາຫາຣະ ສະຫະຊາຕະ ອັນຍະມັນຍະ ນິດສະຍະ ວິປາກະ ສໍາປະຍຸດຕະ ອັດຖິ ແລະອະວິຄະຕະ ມີ ໓ ວາຣະ

ປັດໄຈ ໘ ຄື ອາຫາຣະ ສະຫະຊາຕະ ອັນຍະມັນຍະ ນິດສະຍະ ກໍາມະ ສໍາປະຍຸດຕະ ອັດຖິ ແລະອະວິຄະຕະ ມີ ໓ ວາຣະ

ປັດໄຈ ໙ ຄື ອາຫາຣະ ສະຫະຊາຕະ ອັນຍະມັນຍະ ນິດສະຍະ ກໍາມະ ວິປາກະ ສໍາປະຍຸດຕະ ອັດຖິ ແລະອະວິຄະຕະ ມີ ໓ ວາຣະ

ປັດໄຈ ໘ ຄື ອາຫາຣະ ສະຫະຊາຕະ ອັນຍະມັນຍະ ນິດສະຍະ ອິນທະຣິຍະ ສໍາປະຍຸດຕະ ອັດຖິ ແລະອະວິຄະຕະ ມີ ໓ ວາຣະ

ປັດໄຈ ໙ ຄື ອາຫາຣະ ສະຫະຊາຕະ ອັນຍະມັນຍະ ນິດສະຍະ ວິປາກະ ອິນທະຣິຍະ ສໍາປະຍຸດຕະ ອັດຖິ ແລະອະວິຄະຕະ ມີ ໓ ວາຣະ

ປັດໄຈ ໙ ຄື ອາຫາຣະ ອະທິປະຕິ ສະຫະຊາຕະ ອັນຍະມັນຍະ ນິດສະຍະ ອິນທະຣິຍະ ສໍາປະຍຸດຕະ ອັດຖິ ແລະອະວິຄະຕະ ມີ ໓ ວາຣະ

ປັດໄຈ ໑໐ ຄື ອາຫາຣະ ອະທິປະຕິ ສະຫະຊາຕະ ອັນຍະມັນຍະ ນິດສະຍະ ວິປາກະ ອິນທະຣິຍະ ສໍາປະຍຸດຕະ ອັດຖິ ແລະອະວິຄະຕະ ມີ ໔ ວາຣະ

## ອິນຊີສະພາຄະໄນ

| | | | |
|---|---|---|---|
| [ກຸລ] ເຫຕຸປັດໄຈ | ກັບອິນທະຣິຍະປັດໄຈ | ມີ ໔ ວາຣະ |
| ອະທິປະຕິປັດໄຈ | ,, | ມີ ໓ ວາຣະ |
| ສະຫະຊາຕະປັດໄຈ | ,, | ມີ ໓ ວາຣະ |

| | | |
|---|---|---|
| ອັນຍະມັນຍະປັດໄຈ | ,, | ມີ ๑ ວາຣະ |
| ນິດສະຍະປັດໄຈ | ,, | ມີ ๑ ວາຣະ |
| ວິປາກະປັດໄຈ | ,, | ມີ ๑ ວາຣະ |
| ອາຫາຣະປັດໄຈ | ,, | ມີ ๑ ວາຣະ |
| ຊານະປັດໄຈ | ,, | ມີ ๑ ວາຣະ |
| ມັກຄະປັດໄຈ | ,, | ມີ ๑ ວາຣະ |
| ສຳປະຍຸດຕະປັດໄຈ | ,, | ມີ ๑ ວາຣະ |
| ອັດຖິປັດໄຈ | ,, | ມີ ๑ ວາຣະ |
| ອະວິຄະຕະປັດໄຈ | ,, | ມີ ๑ ວາຣະ (໑໘) |

## ຄະຕະນາ (໑໖)

ປັດໄຈ ໗ ຄື ອິນທະຣິຍະ ສະຫະຊາຕະ ອັນຍະມັນຍະ ນິດສະຍະ ສຳປະຍຸດຕະ ອັດຖິ ແລະອະວິຄະຕະ ມີ ๑ ວາຣະ

ປັດໄຈ ໘ ຄື ອິນທະຣິຍະ ສະຫະຊາຕະ ອັນຍະມັນຍະ ນິດສະຍະ ວິປາກະ ສຳປະຍຸດຕະ ອັດຖິ ແລະອະວິຄະຕະ ມີ ๑ ວາຣະ

ປັດໄຈ ໘ ຄື ອິນທະຣິຍະ ສະຫະຊາຕະ ອັນຍະມັນຍະ ນິດສະຍະ ມັກຄະ ສຳປະຍຸດຕະ ອັດຖິ ແລະອະວິຄະຕະ ມີ ๑ ວາຣະ

ປັດໄຈ ໙ ຄື ອິນທະຣິຍະ ສະຫະຊາຕະ ອັນຍະມັນຍະ ນິດສະຍະ ວິປາກະ ມັກຄະ ສຳປະຍຸດຕະ ອັດຖິ ແລະອະວິຄະຕະ ມີ ໔ ວາຣະ

ປັດໄຈ ໙ ຄື ອິນທະຣິຍະ ສະຫະຊາຕະ ອັນຍະມັນຍະ ນິດສະຍະ ຊານະ ມັກຄະ ສຳປະຍຸດຕະ ອັດຖິ ແລະອະວິຄະຕະ ມີ ๑ ວາຣະ

ປັດໄຈ ໑໐ ຄື ອິນທະຣິຍະ ສະຫະຊາຕະ ອັນຍະມັນຍະ ນິດສະຍະ ວິປາກະ ຊານະ ມັກຄະ ສຳປະຍຸດຕະ ອັດຖິ ແລະອະວິຄະຕະ ມີ ໔ ວາຣະ

ປັດໄຈ ໘ ຄື ອິນທະຣິຍະ ສະຫະຊາຕະ ອັນຍະມັນຍະ ນິດສະຍະ ອາຫາຣະ ສຳປະຍຸດຕະ ອັດຖິ ແລະອະວິຄະຕະ ມີ ๑ ວາຣະ

ປັດໄຈ ໙ ຄື ອິນທະຣິຍະ ສະຫະຊາຕະ ອັນຍະມັນຍະ ນິດສະຍະ ວິປາກະ ອາຫາຣະ ສຳປະຍຸດຕະ ອັດຖິ ແລະອະວິຄະຕະ ມີ ๑ ວາຣະ

ປັດໄຈ ໙ ຄື ອິນທະຣິຍະ ອະທິປະຕິ ສະຫະຊາຕະ ອັນຍະມັນຍະ ນິດສະຍະ ອາຫາຣະ ສຳປະຍຸດຕະ ອັດຖິ ແລະອະວິຄະຕະ ມີ ๑ ວາຣະ

ປັດໄຈ ໑໐ ຄື ອິນທະຣິຍະ ອະທິປະຕິ ສະຫະຊາຕະ ອັນຍະມັນຍະ ນິດສະຍະ ວິປາກະ ອາຫາຣະ ສຳປະຍຸດຕະ ອັດຖິ ແລະອະວິຄະຕະ ມີ ໔ ວາຣະ

ປັດໄຈ ໙ ຄື ອິນທະຣິຍະ ອະທິປະຕິ ສະຫະຊາຕະ ອັນຍະມັນຍະ ນິດສະຍະ ມັກຄະ ສໍາປະຍຸດຕະ ອັດຖິ ແລະອະວິຄະຕະ ມີ ໓ ວາຣະ

ປັດໄຈ ໑໐ ຄື ອິນທະຣິຍະ ອະທິປະຕິ ສະຫະຊາຕະ ອັນຍະມັນຍະ ນິດສະຍະ ວິປາກະ ມັກຄະ ສໍາປະຍຸດຕະ ອັດຖິ ແລະອະວິຄະຕະ ມີ ໔ ວາຣະ

ປັດໄຈ ໙ ຄື ອິນທະຣິຍະ ເຫຕຸ ສະຫະຊາຕະ ອັນຍະມັນຍະ ນິດສະຍະ ມັກຄະ ສໍາປະຍຸດຕະ ອັດຖິ ແລະອະວິຄະຕະ ມີ ໔ ວາຣະ

ປັດໄຈ ໑໐ ຄື ອິນທະຣິຍະ ເຫຕຸ ສະຫະຊາຕະ ອັນຍະມັນຍະ ນິດສະຍະ ວິປາກະ ມັກຄະ ສໍາປະຍຸດຕະ ອັດຖິ ແລະອະວິຄະຕະ ມີ ໔ ວາຣະ

ປັດໄຈ ໑໐ ຄື ອິນທະຣິຍະ ເຫຕຸ ອະທິປະຕິ ສະຫະຊາຕະ ອັນຍະມັນຍະ ນິດສະຍະ ມັກຄະ ສໍາປະຍຸດຕະ ອັດຖິ ແລະອະວິຄະຕະ ມີ ໔ ວາຣະ

ປັດໄຈ ໑໑ ຄື ອິນທະຣິຍະ ເຫຕຸ ອະທິປະຕິ ສະຫະຊາຕະ ອັນຍະມັນຍະ ນິດສະຍະ ວິປາກະ ມັກຄະ ສໍາປະຍຸດຕະ ອັດຖິ ແລະອະວິຄະຕະ ມີ ໔ ວາຣະ

## ຊານະສະພາຄະໄນ

| | | |
|---|---|---|
| [໗໐] ສະຫະຊາຕະປັດໄຈ | ກັບຊານະປັດໄຈ | ມີ ໓ ວາຣະ |
| ອັນຍະມັນຍະປັດໄຈ | ,, | ມີ ໓ ວາຣະ |
| ນິດສະຍະປັດໄຈ | ,, | ມີ ໓ ວາຣະ |
| ວິປາກະປັດໄຈ | ,, | ມີ ໔ ວາຣະ |
| ອິນຊີຍະປັດໄຈ | ,, | ມີ ໓ ວາຣະ |
| ມັກຄະປັດໄຈ | ,, | ມີ ໓ ວາຣະ |
| ສໍາປະຍຸດຕະປັດໄຈ | ,, | ມີ ໓ ວາຣະ |
| ອັດຖິປັດໄຈ | ,, | ມີ ໓ ວາຣະ |
| ອະວິຄະຕະປັດໄຈ | ,, | ມີ ໓ ວາຣະ (໙) |

## ຄະຕະນາ (໖)

ປັດໄຈ ໗ ຄື ຊານະ ສະຫະຊາຕະ ອັນຍະມັນຍະ ນິດສະຍະ ສໍາປະຍຸດຕະ ອັດຖິ ແລະອະວິຄະຕະ ມີ ໓ ວາຣະ

ປັດໄຈ ໗ ຄື ຊານະ ສະຫະຊາຕະ ອັນຍະມັນຍະ ນິດສະຍະ ວິປາກະ ສໍາປະຍຸດຕະ ອັດຖິ ແລະອະວິຄະຕະ ມີ ໔ ວາຣະ

ປັດໄຈ ໗ ຄື ຊານະ ສະຫະຊາຕະ ອັນຍະມັນຍະ ນິດສະຍະ ມັກຄະ ສໍາປະຍຸດຕະ ອັດຖິ ແລະອະວິຄະຕະ ມີ ໓ ວາຣະ

ປັດໄຈ ໙ ຄື ຊານະ ສະຫະຊາຕະ ອັນຍະມັນຍະ ນິດສະຍະ ວິປາກະ ມັກຄະ ສຳປະຍຸດຕະ ອັດຖິ ແລະອະວິຄະຕະ ມີ ໒ ວາຣະ

ປັດໄຈ ໙ ຄື ຊານະ ສະຫະຊາຕະ ອັນຍະມັນຍະ ນິດສະຍະ ອິນທະຣິຍະ ມັກຄະ ສຳປະຍຸດຕະ ອັດຖິ ແລະອະວິຄະຕະ ມີ ໓ ວາຣະ

ປັດໄຈ ໑໐ ຄື ຊານະ ສະຫະຊາຕະ ອັນຍະມັນຍະ ນິດສະຍະ ວິປາກະ ອິນທະຣິຍະ ມັກຄະ ສຳປະຍຸດຕະ ອັດຖິ ແລະອະວິຄະຕະ ມີ ໒ ວາຣະ

## ມັກຄະສະພາຄະໄນ

| | | |
|---|---|---|
| [໗໑] ເຫຕຸປັດໄຈ | ກັບມັກຄະປັດໄຈ | ມີ ໒ ວາຣະ |
| ອະທິປະຕິປັດໄຈ | ,, | ມີ ໓ ວາຣະ |
| ສະຫະຊາຕະປັດໄຈ | ,, | ມີ ໓ ວາຣະ |
| ອັນຍະມັນຍະປັດໄຈ | ,, | ມີ ໓ ວາຣະ |
| ນິດສະຍະປັດໄຈ | ,, | ມີ ໓ ວາຣະ |
| ວິປາກະປັດໄຈ | ,, | ມີ ໓ ວາຣະ |
| ອິນຊີຍະປັດໄຈ | ,, | ມີ ໓ ວາຣະ |
| ຊານະປັດໄຈ | ,, | ມີ ໓ ວາຣະ |
| ສຳປະຍຸດຕະປັດໄຈ | ,, | ມີ ໓ ວາຣະ |
| ອັດຖິປັດໄຈ | ,, | ມີ ໓ ວາຣະ |
| ອະວິຄະຕະປັດໄຈ | ,, | ມີ ໓ ວາຣະ (໑໑) |

## ຄະຕະນາ (໑໔)

ປັດໄຈ ៗ ຄື ມັກຄະ ສະຫະຊາຕະ ອັນຍະມັນຍະ ນິດສະຍະ ສຳປະຍຸດຕະ ອັດຖິ ແລະອະວິຄະຕະ ມີ ໓ ວາຣະ

ປັດໄຈ ໘ ຄື ມັກຄະ ສະຫະຊາຕະ ອັນຍະມັນຍະ ນິດສະຍະ ວິປາກະ ສຳປະຍຸດຕະ ອັດຖິ ແລະອະວິຄະຕະ ມີ ໒ ວາຣະ

ປັດໄຈ ໘ ຄື ມັກຄະ ສະຫະຊາຕະ ອັນຍະມັນຍະ ນິດສະຍະ ອິນທະຣິຍະ ສຳປະຍຸດຕະ ອັດຖິ ແລະອະວິຄະຕະ ມີ ໓ ວາຣະ

ປັດໄຈ ໙ ຄື ມັກຄະ ສະຫະຊາຕະ ອັນຍະມັນຍະ ນິດສະຍະ ວິປາກະ ອິນທະຣິຍະ ສຳປະຍຸດຕະ ອັດຖິ ແລະອະວິຄະຕະ ມີ ໒ ວາຣະ

ປັດໄຈ ໘ ຄື ມັກຄະ ສະຫະຊາຕະ ອັນຍະມັນຍະ ນິດສະຍະ ຊານະ ສຳປະຍຸດຕະ ອັດຖິ ແລະອະວິຄະຕະ ມີ ໓ ວາຣະ

ປັດໄຈ ໙ ຄື ມັກຄະ ສະຫະຊາຕະ ອັນຍະມັນຍະ ນິດສະຍະ ວິປາກະ ຊານະ ສໍາປະຍຸດຕະ ອັດຖິ ແລະອະວິຄະຕະ ມີ ໔ ວາຣະ

ປັດໄຈ ໙ ຄື ມັກຄະ ສະຫະຊາຕະ ອັນຍະມັນຍະ ນິດສະຍະ ອິນທະຣິຍະ ຊານະ ສໍາປະຍຸດຕະ ອັດຖິ ແລະອະວິຄະຕະ ມີ ໖ ວາຣະ

ປັດໄຈ ໑໐ ຄື ມັກຄະ ສະຫະຊາຕະ ອັນຍະມັນຍະ ນິດສະຍະ ວິປາກະ ອິນທະຣິຍະ ຊານະ ສໍາປະຍຸດຕະ ອັດຖິ ແລະອະວິຄະຕະ ມີ ໔ ວາຣະ

ປັດໄຈ ໙ ຄື ມັກຄະ ອະທິປະຕິ ສະຫະຊາຕະ ອັນຍະມັນຍະ ນິດສະຍະ ອິນທະຣິຍະ ສໍາປະຍຸດຕະ ອັດຖິ ແລະອະວິຄະຕະ ມີ ໖ ວາຣະ

ປັດໄຈ ໑໐ ຄື ມັກຄະ ອະທິປະຕິ ສະຫະຊາຕະ ອັນຍະມັນຍະ ນິດສະຍະ ວິປາກະ ອິນທະຣິຍະ ສໍາປະຍຸດຕະ ອັດຖິ ແລະອະວິຄະຕະ ມີ ໔ ວາຣະ

ປັດໄຈ ໙ ຄື ມັກຄະ ເຫຕຸ ສະຫະຊາຕະ ອັນຍະມັນຍະ ນິດສະຍະ ອິນທະຣິຍະ ສໍາປະຍຸດຕະ ອັດຖິ ແລະອະວິຄະຕະ ມີ ໔ ວາຣະ

ປັດໄຈ ໑໐ ຄື ມັກຄະ ເຫຕຸ ສະຫະຊາຕະ ອັນຍະມັນຍະ ນິດສະຍະ ວິປາກະ ອິນທະຣິຍະ ສໍາປະຍຸດຕະ ອັດຖິ ແລະອະວິຄະຕະ ມີ ໔ ວາຣະ

ປັດໄຈ ໑໐ ຄື ມັກຄະ ເຫຕຸ ອະທິປະຕິ ສະຫະຊາຕະ ອັນຍະມັນຍະ ນິດສະຍະ ອິນທະຣິຍະ ສໍາປະຍຸດຕະ ອັດຖິ ແລະອະວິຄະຕະ ມີ ໔ ວາຣະ

ປັດໄຈ ໑໑ ຄື ມັກຄະ ເຫຕຸ ອະທິປະຕິ ສະຫະຊາຕະ ອັນຍະມັນຍະ ນິດສະຍະ ວິປາກະ ອິນທະຣິຍະ ສໍາປະຍຸດຕະ ອັດຖິ ແລະອະວິຄະຕະ ມີ ໔ ວາຣະ

## ສໍາປະຍຸດຕະສະພາຄະໄນ

| | | |
|---|---|---|
| [໗໔] ເຫຕຸປັດໄຈ | ກັບສໍາປະຍຸດຕະປັດໄຈ | ມີ ໖ ວາຣະ |
| ອະທິປະຕິປັດໄຈ | ,, | ມີ ໖ ວາຣະ |
| ສະຫະຊາຕະປັດໄຈ | ,, | ມີ ໖ ວາຣະ |
| ອັນຍະມັນຍະປັດໄຈ | ,, | ມີ ໖ ວາຣະ |
| ນິດສະຍະປັດໄຈ | ,, | ມີ ໖ ວາຣະ |
| ກໍາມະປັດໄຈ | ,, | ມີ ໖ ວາຣະ |
| ວິປາກະປັດໄຈ | ,, | ມີ ໖ ວາຣະ |
| ອາຫາຣະປັດໄຈ | ,, | ມີ ໖ ວາຣະ |
| ອິນຊີຍະປັດໄຈ | ,, | ມີ ໖ ວາຣະ |
| ຊານະປັດໄຈ | ,, | ມີ ໖ ວາຣະ |
| ມັກຄະປັດໄຈ | ,, | ມີ ໖ ວາຣະ |

| | | |
|---|---|---|
| ອັດຖິປັດໄຈ | ,, | ມີ ๑ ວາຣະ |
| ອະວິຄະຕະປັດໄຈ | ,, | ມີ ๑ ວາຣະ (໑໑) |

## ຄະຕະນາ (໔)

ປັດໄຈ ໖ ຄື ສໍາປະຍຸດຕະ ສະຫະຊາຕະ ອັນຍະມັນຍະ ນິດສະຍະ ອັດຖິ ແລະອະວິຄະຕະ ມີ ๑ ວາຣະ

ປັດໄຈ ໗ ຄື ສໍາປະຍຸດຕະ ສະຫະຊາຕະ ອັນຍະມັນຍະ ນິດສະຍະ ວິປາກະ ອັດຖິ ແລະອະວິຄະຕະ ມີ ๑ ວາຣະ

(ຯລຯ ກັບອັດຖິປັດໄຈ ນັດຖິປັດໄຈ ວິຄະຕະປັດໄຈ ອະວິຄະຕະປັດໄຈ ຯລຯ)

### ອະນຸໂລມແຫ່ງປັນຫາວາຣະ ຈົບ

## ປັນຫາວາຣະ ປັດຈະນິຍຸດທາຣະ

[໘๑] ສະພາວະທໍາທີ່ສໍາປະຍຸດດ້ວຍສຸກຂະເວທະນາເປັນປັດໄຈ ແກ່ສະພາວະທໍາທີ່ສໍາປະຍຸດດ້ວຍສຸກຂະເວທະນາໂດຍອາຣໍາມະນະປັດໄຈ ສະຫະຊາຕະປັດໄຈ ອຸປະນິດສະຍະປັດໄຈ ແລະກໍາມະປັດໄຈ (໑)

ສະພາວະທໍາທີ່ສໍາປະຍຸດດ້ວຍສຸກຂະເວທະນາເປັນປັດໄຈ ແກ່ສະພາວະທໍາທີ່ສໍາປະຍຸດດ້ວຍທຸກຂະເວທະນາໂດຍອາຣໍາມະນະປັດໄຈ ອຸປະນິດສະຍະປັດໄຈ ແລະກໍາມະປັດໄຈ (໔)

ສະພາວະທໍາທີ່ສໍາປະຍຸດດ້ວຍສຸກຂະເວທະນາເປັນປັດໄຈ ແກ່ສະພາວະທໍາທີ່ສໍາປະຍຸດດ້ວຍອະທຸກຂະມະສຸຂະເວທະນາໂດຍອາຣໍາມະນະປັດໄຈ ອຸປະນິດສະຍະປັດໄຈ ແລະກໍາມະປັດໄຈ (๑)

[໘໔] ສະພາວະທໍາທີ່ສໍາປະຍຸດດ້ວຍທຸກຂະເວທະນາເປັນປັດໄຈ ແກ່ສະພາວະທໍາທີ່ສໍາປະຍຸດດ້ວຍທຸກຂະເວທະນາໂດຍອາຣໍາມະນະປັດໄຈ ສະຫະຊາຕະປັດໄຈ ອຸປະນິດສະຍະປັດໄຈ ແລະກໍາມະປັດໄຈ (໑)

ສະພາວະທໍາທີ່ສໍາປະຍຸດດ້ວຍທຸກຂະເວທະນາເປັນປັດໄຈ ແກ່ສະພາວະທໍາທີ່ສໍາປະຍຸດດ້ວຍສຸກຂະເວທະນາໂດຍອາຣໍາມະນະປັດໄຈ ອຸປະນິດສະຍະປັດໄຈ ແລະກໍາມະປັດໄຈ (໔)

ສະພາວະທໍາທີ່ສໍາປະຍຸດດ້ວຍທຸກຂະເວທະນາເປັນປັດໄຈ ແກ່ສະພາວະທໍາທີ່ສໍາປະຍຸດດ້ວຍອະທຸກຂະມະສຸຂະເວທະນາໂດຍອາຣໍາມະນະປັດໄຈ ອຸປະນິດສະຍະປັດໄຈ ແລະກໍາມະປັດໄຈ (๑)

[໗໘] ສະພາວະທຳທີ່ສຳປະຍຸດດ້ວຍອະທຸກຂະມະສຸຂະເວທະນາເປັນປັດໄຈ ແກ່ສະພາວະທຳທີ່ສຳປະຍຸດດ້ວຍອະທຸກຂະມະສຸຂະເວທະນາໂດຍອາຣຳມະນະປັດໄຈ ສະຫະຊາຕະປັດໄຈ ອຸປະນິດສະຍະປັດໄຈ ແລະກຳມະປັດໄຈ (໑)

ສະພາວະທຳທີ່ສຳປະຍຸດດ້ວຍອະທຸກຂະມະສຸຂະເວທະນາເປັນປັດໄຈ ແກ່ສະພາວະທຳທີ່ສຳປະຍຸດດ້ວຍສຸກຂະເວທະນາໂດຍອາຣຳມະນະປັດໄຈ ອຸປະນິດສະຍະປັດໄຈ ແລະກຳມະປັດໄຈ (໔)

ສະພາວະທຳທີ່ສຳປະຍຸດດ້ວຍອະທຸກຂະມະສຸຂະເວທະນາເປັນປັດໄຈ ແກ່ສະພາວະທຳທີ່ສຳປະຍຸດດ້ວຍທຸກຂະເວທະນາໂດຍອາຣຳມະນະປັດໄຈ ອຸປະນິດສະຍະປັດໄຈ ແລະກຳມະປັດໄຈ (໓)

## ໔. ປັດຈະຍະປັດຈະນີຍະ ໔. ສັງຂະຍາວາຣະ

### ສຸດທະໄນ

| | |
|---|---|
| [໗໙] ນະເຫຕຸປັດໄຈ | ມີ ໙ ວາຣະ |
| ນະອາຣຳມະນະປັດໄຈ | ມີ ໙ ວາຣະ |
| ນະອະທິປະຕິປັດໄຈ | ມີ ໙ ວາຣະ |
| ນະອະນັນຕະຣະປັດໄຈ | ມີ ໙ ວາຣະ |
| ນະສະມະນັນຕະຣະປັດໄຈ | ມີ ໙ ວາຣະ |
| ນະສະຫະຊາຕະປັດໄຈ | ມີ ໙ ວາຣະ |
| ນະອັນຍະມັນຍະປັດໄຈ | ມີ ໙ ວາຣະ |
| ນະນິດສະຍະປັດໄຈ | ມີ ໙ ວາຣະ |
| ນະອຸປະນິດສະຍະປັດໄຈ | ມີ ໙ ວາຣະ |
| ນະປຸເຣຊາຕະປັດໄຈ | ມີ ໙ ວາຣະ |
| ນະປັດສາຊາຕະປັດໄຈ | ມີ ໙ ວາຣະ |
| ນະອາເສວະນະປັດໄຈ | ມີ ໙ ວາຣະ |
| ນະກຳມະປັດໄຈ | ມີ ໙ ວາຣະ |
| ນະວິປາກະປັດໄຈ | ມີ ໙ ວາຣະ |
| ນະອາຫາຣະປັດໄຈ | ມີ ໙ ວາຣະ |
| ນະອິນທະຣິຍະປັດໄຈ | ມີ ໙ ວາຣະ |
| ນະຊານະປັດໄຈ | ມີ ໙ ວາຣະ |

| | |
|---|---|
| ນະມັກຄະປັດໄຈ | ມີ ໙ ວາຣະ |
| ນະສຳປະຍຸດຕະປັດໄຈ | ມີ ໙ ວາຣະ |
| ນະວິບປະຍຸດຕະປັດໄຈ | ມີ ໙ ວາຣະ |
| ໂນອັດຖິປັດໄຈ | ມີ ໙ ວາຣະ |
| ໂນນັດຖິປັດໄຈ | ມີ ໙ ວາຣະ |
| ໂນວິຄະຕະປັດໄຈ | ມີ ໙ ວາຣະ |
| ໂນອະວິຄະຕະປັດໄຈ | ມີ ໙ ວາຣະ |

## ນະເຫຕຸທຸກະໄນ

| | | |
|---|---|---|
| [໘໗] ນະອາຣຳມະນະປັດໄຈ | ກັບນະເຫຕຸປັດໄຈ | ມີ ໙ ວາຣະ ຯລຯ |
| ໂນອະວິຄະຕະປັດໄຈ | ,, | ມີ ໙ ວາຣະ |

## ຕິກະໄນ

ນະອະທິປະຕິປັດໄຈ ກັບນະເຫຕຸປັດໄຈແລະນະອາຣຳມະນະປັດໄຈ ມີ ໙ ວາຣະ ຯລຯ

| | | |
|---|---|---|
| ນະອຸປະນິດສະຍະປັດໄຈ | ,, | ມີ ໘ ວາຣະ ຯລຯ |
| ໂນອະວິຄະຕະປັດໄຈ | ,, | ມີ ໙ ວາຣະ ຯລຯ |

## ເອກະວິສະກະໄນ

ໂນອະວິຄະຕະປັດໄຈ ກັບນະເຫຕຸປັດໄຈ ນະອາຣຳມະນະປັດໄຈ ຯລຯ ນະອຸປະນິດສະຍະປັດໄຈ ນະປຸເຣຊາຕະປັດໄຈ ນະປັດສາຊາຕະປັດໄຈ ນະອາເສວະນະປັດໄຈ ນະວິປາກະປັດໄຈ ແລະນະອາຫາຣະປັດໄຈ ຯລຯ ມີ ໘ ວາຣະ

### ນະເຫຕຸມູລະກະໄນ ຈົບ

(ຜູ້ຮູ້ເພິ່ງນັບໃຫ້ເປັນມູລະກະໄນທັງໝົດ ເໝືອນການນັບຈຳນວນປັດຈະນີຍະແຫ່ງກຸສະລະຕິກະ)

### ປັດຈະນີຍະ ຈົບ

# ໓. ປັດຈະຍານຸໂລມະປັດຈະນີຍະ

## ເຫຕຸສະພາຄະໄນ

[໙໙] ນະອາຣຳມະນະປັດໄຈ ກັບເຫຕຸປັດໄຈ ມີ ໓ ວາຣະ
ນະອະທິປະຕິປັດໄຈ ,, ມີ ໓ ວາຣະ
ນະອະນັນຕະຣະປັດໄຈ ,, ມີ ໓ ວາຣະ
ນະສະມະນັນຕະຣະປັດໄຈ ,, ມີ ໓ ວາຣະ
ນະອຸປະນິດສະຍະປັດໄຈ ,, ມີ ໓ ວາຣະ
ນະປຸເຣຊາຕະປັດໄຈ ,, ມີ ໓ ວາຣະ
ນະປັດສາຊາຕະປັດໄຈ ,, ມີ ໓ ວາຣະ
ນະອາເສວະນະປັດໄຈ ,, ມີ ໓ ວາຣະ
ນະກຳມະປັດໄຈ ,, ມີ ໓ ວາຣະ
ນະວິປາກະປັດໄຈ ,, ມີ ໓ ວາຣະ
ນະອາຫາຣະປັດໄຈ ,, ມີ ໓ ວາຣະ
ນະອິນທະຣິຍະປັດໄຈ ,, ມີ ໓ ວາຣະ
ນະຊານະປັດໄຈ ,, ມີ ໓ ວາຣະ
ນະມັກຄະປັດໄຈ ,, ມີ ໓ ວາຣະ
ນະວິບປະຍຸດຕະປັດໄຈ ,, ມີ ໓ ວາຣະ
ໂນນັດຖິປັດໄຈ ,, ມີ ໓ ວາຣະ
ໂນວິຄະຕະປັດໄຈ ,, ມີ ໓ ວາຣະ

## ສາມັນຍະຄະຕະນາ

[໙໘] ນະອາຣຳມະນະປັດໄຈ ກັບປັດໄຈ ໆ ຄື ເຫຕຸ ສະຫະຊາຕະ ອັນຍະມັນຍະ ນິດສະຍະ ສຳປະຍຸດຕະ ອັດຖິ ແລະອະວິຄະຕະ ມີ ໓ ວາຣະ ໆລໆ

ໂນວິຄະຕະປັດໄຈ ກັບ ໆລໆ ມີ ໓ ວາຣະ

(ເພິ່ງນັບເໝືອນການນັບຈຳນວນອະນຸໂລມປັດຈະນີຍະແຫ່ງກຸສະລະຕິກະທີ່ທ່ານໄດ້ນັບໄວ້ຕາມແນວແຫ່ງການສາທະຍາຍ)

ນະເຫຕຸປັດໄຈ ກັບກຳມະປັດໄຈ ມີ ໙ ວາຣະ
ນະອາຣຳມະນະປັດໄຈ ,, ມີ ໙ ວາຣະ ໆລໆ
ໂນອະວິຄະຕະປັດໄຈ ,, ມີ ໙ ວາຣະ (ຫຍໍ້)

**ການນັບອະນຸໂລມປັດຈະນີຍະ ຈົບ**

# ໔. ປັດຈະຍະປັດຈະນີຍານຸໂລມ

## ນະເຫຕຸທຸກະໄນ

| | | |
|---|---|---|
| [໗໐] ອາຣຳມະນະປັດໄຈ | ກັບນະເຫຕຸປັດໄຈ | ມີ ໙ ວາຣະ |
| ອະທິປະຕິປັດໄຈ | ,, | ມີ ໕ ວາຣະ |
| ອະນັນຕະຣະປັດໄຈ | ,, | ມີ ໗ ວາຣະ |
| ສະມະນັນຕະຣະປັດໄຈ | ,, | ມີ ໗ ວາຣະ |
| ສະຫະຊາຕະປັດໄຈ | ,, | ມີ ໓ ວາຣະ |
| ອັນຍະມັນຍະປັດໄຈ | ,, | ມີ ໓ ວາຣະ |
| ນິດສະຍະປັດໄຈ | ,, | ມີ ໓ ວາຣະ |
| ອຸປະນິດສະຍະປັດໄຈ | ,, | ມີ ໙ ວາຣະ |
| ອາເສວະນະປັດໄຈ | ,, | ມີ ໓ ວາຣະ |
| ກຳມະປັດໄຈ | ,, | ມີ ໘ ວາຣະ |
| ວິປາກະປັດໄຈ | ,, | ມີ ໓ ວາຣະ |
| ອາຫາຣະປັດໄຈ | ,, | ມີ ໓ ວາຣະ |
| ອິນຊີຍະປັດໄຈ | ,, | ມີ ໓ ວາຣະ |
| ຊານະປັດໄຈ | ,, | ມີ ໓ ວາຣະ |
| ມັກຄະປັດໄຈ | ,, | ມີ ໓ ວາຣະ |
| ສຳປະຍຸດຕະປັດໄຈ | ,, | ມີ ໓ ວາຣະ |
| ອັດຖິປັດໄຈ | ,, | ມີ ໓ ວາຣະ |
| ນັດຖິປັດໄຈ | ,, | ມີ ໗ ວາຣະ |
| ວິຄະຕະປັດໄຈ | ,, | ມີ ໗ ວາຣະ |
| ອະວິຄະຕະປັດໄຈ | ,, | ມີ ໓ ວາຣະ |

## ຕິກະໄນ

| | | |
|---|---|---|
| ນະອະທິປະຕິປັດໄຈ | ກັບນະເຫຕຸປັດໄຈແລະນະອາຣຳມະນະປັດໄຈ | ມີ ໓ ວາຣະ |
| ອະນັນຕະຣະປັດໄຈ | ,, | ມີ ໗ ວາຣະ ฯລฯ |
| ອະວິຄະຕະປັດໄຈ | ,, | ມີ ໓ ວາຣະ ฯລฯ |

## ສັກກະໄນ

ສະຫະຊາຕະປັດໄຈ ກັບນະເຫຕຸປັດໄຈ ນະອາຣຳມະນະປັດໄຈ ນະອະທິປະຕິປັດໄຈ ນະອະນັນຕະຣະປັດໄຈ ແລະນະສະມະນັນຕະຣະປັດໄຈ ມີ ໓ ວາຣະ

| | | |
|---|---|---|
| ອັນຍະມັນຍະປັດໄຈ | ກັບ ໆລໆ | ມີ ໓ ວາຣະ |
| ນິດສະຍະປັດໄຈ | ກັບ ໆລໆ | ມີ ໓ ວາຣະ |
| ອຸປະນິດສະຍະປັດໄຈ | ກັບ ໆລໆ | ມີ ໙ ວາຣະ |
| ກຳມະປັດໄຈ | ກັບ ໆລໆ | ມີ ໗ ວາຣະ |
| ວິປາກະປັດໄຈ | ກັບ ໆລໆ | ມີ ໓ ວາຣະ ໆລໆ |
| ອະວິຄະຕະປັດໄຈ | ກັບ ໆລໆ | ມີ ໓ ວາຣະ ໆລໆ |

## ນະອະກະໄນ

ອຸປະນິດສະຍະປັດໄຈ ກັບນະເຫຕຸປັດໄຈ ນະອາຣຳມະນະປັດໄຈ (ຫຍໍ້ປັດໄຈທີ່ເປັນມູນ) ແລະນະນິດສະຍະປັດໄຈ ມີ ໙ ວາຣະ

| | | |
|---|---|---|
| ກຳມະປັດໄຈ | ກັບ ໆລໆ | ມີ ໗ ວາຣະ ໆລໆ |

## ຈະຕຸວີສະກະໄນ (ສະອຸປະນິດສະຍະ)

ກຳມະປັດໄຈ ກັບນະເຫຕຸປັດໄຈ ນະອາຣຳມະນະປັດໄຈ ໆລໆ ນະອຸປະນິດສະຍະປັດໄຈ ນະປຸເຣຊາຕະປັດໄຈ ນະປັດສາຊາຕະປັດໄຈ ນະອາເສວະນະປັດໄຈ ນະວິປາກະປັດໄຈ ນະອາຫາຣະປັດໄຈ ນະອິນທະຣິຍະປັດໄຈ ນະຊານະປັດໄຈ ນະມັກຄະປັດໄຈ ນະສຳປະຍຸດຕະປັດໄຈ ນະວິບປະຍຸດຕະປັດໄຈ ໂນອັດຖິປັດໄຈ ໂນນັດຖິປັດໄຈ ໂນວິຄະຕະປັດໄຈ ແລະໂນອະວິຄະຕະປັດໄຈ ມີ ໗ ວາຣະ

## ຈະຕຸວີສະກະໄນ (ສະກຳມະ)

ອຸປະນິດສະຍະປັດໄຈ ກັບນະເຫຕຸປັດໄຈ ນະອາຣຳມະນະປັດໄຈ ໆລໆ ນະນິດສະຍະປັດໄຈ ນະປຸເຣຊາຕະປັດໄຈ ນະປັດສາຊາຕະປັດໄຈ ນະອາເສວະນະປັດໄຈ ນະກຳມະປັດໄຈ ໆລໆ ໂນວິຄະຕະປັດໄຈ ແລະໂນອະວິຄະຕະປັດໄຈ ມີ ໙ ວາຣະ

**ນະເຫຕຸມູລະກະໄນ ຈົບ**

## ນະອາຣຳມະນະທຸກະໄນ

[໗໑] ເຫຕຸປັດໄຈ ກັບນະອາຣຳມະນະປັດໄຈ ມີ ໓ ວາຣະ ຯລຯ
ກຳມະປັດໄຈ ,, ມີ ໒ ວາຣະ ຯລຯ
ອະວິຄະຕະປັດໄຈ ,, ມີ ໓ ວາຣະ ຯລຯ

## ໂນອະວິຄະຕະທຸກະໄນ

[໗໘] ອາຣຳມະນະປັດໄຈ ກັບໂນອະວິຄະຕະປັດໄຈ ມີ ໗ ວາຣະ
ອະທິປະຕິປັດໄຈ ,, ມີ ໔ ວາຣະ
ອະນັນຕະຣະປັດໄຈ ,, ມີ ໗ ວາຣະ
ສະມະນັນຕະຣະປັດໄຈ ,, ມີ ໗ ວາຣະ
ອຸປະນິດສະຍະປັດໄຈ ,, ມີ ໗ ວາຣະ
ອາເສວະນະປັດໄຈ ,, ມີ ໓ ວາຣະ
ກຳມະປັດໄຈ ,, ມີ ໒ ວາຣະ
ນັດຖິປັດໄຈ ,, ມີ ໗ ວາຣະ
ວິຄະຕະປັດໄຈ ,, ມີ ໗ ວາຣະ ຯລຯ

## ຈະຕຸກະໄນ

ອະນັນຕະຣະປັດໄຈ ກັບໂນອະວິຄະຕະປັດໄຈ ນະເຫຕຸປັດໄຈ ແລະນະອາຣຳມະນະປັດໄຈ ມີ ໗ ວາຣະ
ສະມະນັນຕະຣະປັດໄຈ ກັບ ຯລຯ ມີ ໗ ວາຣະ
ອຸປະນິດສະຍະປັດໄຈ ກັບ ຯລຯ ມີ ໗ ວາຣະ
ອາເສວະນະປັດໄຈ ກັບ ຯລຯ ມີ ໓ ວາຣະ
ກຳມະປັດໄຈ ກັບ ຯລຯ ມີ ໒ ວາຣະ
ນັດຖິປັດໄຈ ກັບ ຯລຯ ມີ ໗ ວາຣະ
ວິຄະຕະປັດໄຈ ກັບ ຯລຯ ມີ ໗ ວາຣະ ຯລຯ

## ຈະຕຸວີສະກະໄນ (ສະອຸປະນິດສະຍະ)

ກຳມະປັດໄຈ ກັບໂນອະວິຄະຕະປັດໄຈ ນະເຫຕຸປັດໄຈ ນະອາຣຳມະນະປັດໄຈ ນະອະທິປະຕິປັດໄຈ ນະອະນັນຕະຣະປັດໄຈ ນະສະມະນັນຕະຣະປັດໄຈ ນະສະຫະຊາຕະປັດໄຈ ນະອັນຍະມັນຍະປັດໄຈ ນະນິດສະຍະປັດໄຈ ນະອຸປະນິດສະຍະປັດໄຈ ນະປຸເຣຊາຕະປັດໄຈ

ນະປັດສາຊາຕະປັດໄຈ ນະອາເສວະນະປັດໄຈ ນະວິປາກະປັດໄຈ ນະອາຫາຣະປັດໄຈ ນະອິນທະຣິຍະປັດໄຈ ນະຊານະປັດໄຈ ນະມັກຄະປັດໄຈ ນະສຳປະຍຸດຕະປັດໄຈ ນະວິບປະຍຸດຕະປັດໄຈ ໂນອັດຖິປັດໄຈ ໂນນັດຖິປັດໄຈ ແລະໂນວິຄະຕະປັດໄຈ ມີ ๓ ວາຣະ

## ຈະຕຸວິສະກະໄນ (ສະກຳມະ)

ອຸປະນິດສະຍະປັດໄຈ ກັບໂນອະວິຄະຕະປັດໄຈ ນະເຫຕຸປັດໄຈ ໆລໆ ນະນິດສະຍະປັດໄຈ ນະປຸເຣຊາຕະປັດໄຈ ໆລໆ ນະກຳມະປັດໄຈ ໆລໆ ໂນວິຄະຕະປັດໄຈ ມີ ໗ ວາຣະ

(ເພິ່ງນັບເວທະນາຕິກະນີ້ ເໝືອນການນັບຈຳນວນປັດຈະນີຍານຸໂລມະແຫ່ງກຸສະລະຕິກະທີ່ໄດ້ນັບໄວ້ແລ້ວ ຕາມແນວທາງແຫ່ງການສາທະຍາຍ)

### ປັດຈະນີຍານຸໂລມະ ຈົບ

### ເວທະນາຕິກະ ຈົບ

# ໓. ວິປາກະຕິກະ ໑. ປະຕິດຈະວາຣະ

# ໑. ປັດຈະຍານຸໂລມະ ໑. ວິພັງຄະວາຣະ

## ເຫຕຸປັດໄຈ

[໑] ສະພາວະທຳທີ່ເປັນວິບາກອາໄສສະພາວະທຳທີ່ເປັນວິບາກເກີດຂຶ້ນຍ້ອນເຫດປັດໄຈ ໄດ້ແກ່ ຂັນ ໓ ອາໄສຂັນ ໑ ທີ່ເປັນວິບາກເກີດຂຶ້ນ ໆລໆ ຂັນ ໒ ອາໄສຂັນ ໒ ເກີດຂຶ້ນ ໃນປະຕິສົນທິຂະນະ ຂັນ ໓ ອາໄສຂັນ ໑ ທີ່ເປັນວິບາກເກີດຂຶ້ນ ໆລໆ ຂັນ ໒ ອາໄສຂັນ ໒ ເກີດຂຶ້ນ (໑)

ສະພາວະທຳທີ່ບໍ່ເປັນວິບາກ ແລະບໍ່ເປັນເຫດໃຫ້ເກີດວິບາກອາໄສສະພາວະທຳທີ່ເປັນວິບາກເກີດຂຶ້ນຍ້ອນເຫດປັດໄຈ ໄດ້ແກ່ ຈິດຕະສະມຸດຖານຮູບອາໄສຂັນທີ່ເປັນວິບາກເກີດຂຶ້ນໃນປະຕິສົນທິຂະນະ ກະຕັດຕາຮູບອາໄສຂັນທີ່ເປັນວິບາກເກີດຂຶ້ນທະໄທວັດຖຸອາໄສຂັນເກີດຂຶ້ນ (໒)

ສະພາວະທຳທີ່ເປັນວິບາກ ແລະທີ່ບໍ່ເປັນວິບາກບໍ່ເປັນເຫດໃຫ້ເກີດວິບາກອາໄສສະພາວະທຳທີ່ເປັນວິບາກເກີດຂຶ້ນຍ້ອນເຫດປັດໄຈ ໄດ້ແກ່ ຂັນ ໓ ແລະຈິດຕະສະມຸດຖານຮູບອາໄສຂັນ ໑ ທີ່ເປັນວິບາກເກີດຂຶ້ນ ໆລໆ ຂັນ ໒ ແລະຈິດຕະສະມຸດຖານຮູບອາໄສຂັນ ໒ ເກີດຂຶ້ນ ໃນປະຕິສົນທິຂະນະ ຂັນ ໓ ແລະກະຕັດຕາຮູບອາໄສຂັນ ໑ ທີ່ເປັນວິບາກເກີດຂຶ້ນ ໆລໆ ຂັນ ໒ ແລະກະຕັດຕາຮູບອາໄສຂັນ ໒ ເກີດຂຶ້ນ (໓)

[໔] ສະພາວະທຳທີ່ເປັນເຫດໃຫ້ເກີດວິບາກອາໄສສະພາວະທຳທີ່ເປັນເຫດໃຫ້ເກີດວິບາກເກີດຂຶ້ນຍ້ອນເຫດປັດໄຈ ໄດ້ແກ່ ຂັນ ໓ ອາໄສຂັນ ໑ ທີ່ເປັນເຫດໃຫ້ເກີດວິບາກເກີດຂຶ້ນ ຯລຯ ຂັນ ໔ ອາໄສຂັນ ໔ ເກີດຂຶ້ນ (໑)

ສະພາວະທຳທີ່ບໍ່ເປັນວິບາກ ແລະບໍ່ເປັນເຫດໃຫ້ເກີດວິບາກອາໄສສະພາວະທຳທີ່ເປັນເຫຕຸໃຫ້ເກີດວິບາກເກີດຂຶ້ນຍ້ອນເຫດປັດໄຈ ໄດ້ແກ່ ຈິດຕະສະມຸດຖານຮູບອາໄສຂັນທີ່ເປັນເຫດໃຫ້ເກີດວິບາກເກີດຂຶ້ນ (໔)

ສະພາວະທຳທີ່ເປັນເຫດໃຫ້ເກີດວິບາກ ແລະທີ່ບໍ່ເປັນວິບາກບໍ່ເປັນເຫດໃຫ້ເກີດວິບາກອາໄສ ສະພາວະທຳທີ່ເປັນເຫດໃຫ້ເກີດວິບາກເກີດຂຶ້ນຍ້ອນເຫດປັດໄຈ ໄດ້ແກ່ ຂັນ ໓ ແລະຈິດຕະສະມຸດຖານຮູບອາໄສຂັນ ໑ ທີ່ເປັນເຫດໃຫ້ເກີດວິບາກເກີດຂຶ້ນ ຯລຯ ຂັນ ໔ ແລະ ຈິດຕະສະມຸດຖານຮູບອາໄສຂັນ ໔ ເກີດຂຶ້ນ (໓)

[໓] ສະພາວະທຳທີ່ບໍ່ເປັນວິບາກແລະບໍ່ເປັນເຫດໃຫ້ເກີດວິບາກອາໄສສະພາວະທຳທີ່ບໍ່ເປັນວິບາກ ແລະບໍ່ເປັນເຫດໃຫ້ເກີດວິບາກເກີດຂຶ້ນຍ້ອນເຫດປັດໄຈ ໄດ້ແກ່ ຂັນ ໓ ແລະ ຈິດຕະສະມຸດຖານຮູບອາໄສຂັນ ໑ ທີ່ບໍ່ເປັນວິບາກແລະບໍ່ເປັນເຫດໃຫ້ເກີດວິບາກເກີດຂຶ້ນ ຯລຯ ຂັນ ໔ ແລະຈິດຕະສະມຸດຖານຮູບອາໄສຂັນ ໔ ເກີດຂຶ້ນ ມະຫາພູຕະຮູບ ໓ ອາໄສມະຫາພູຕະຮູບ ໑ ເກີດຂຶ້ນ ຯລຯ ມະຫາພູຕະຮູບ ໔ ອາໄສມະຫາພູຕະຮູບ ໔ ເກີດຂຶ້ນ ຈິດຕະສະມຸດຖານຮູບ ແລະກະຕັດຕາຮູບທີ່ເປັນອຸປາທາຍະຮູບອາໄສມະຫາພູຕະຮູບເກີດຂຶ້ນ (໑)

ສະພາວະທຳທີ່ເປັນວິບາກອາໄສສະພາວະທຳທີ່ບໍ່ເປັນວິບາກ ແລະບໍ່ເປັນເຫດໃຫ້ເກີດວິບາກເກີດຂຶ້ນຍ້ອນເຫດປັດໄຈ ໄດ້ແກ່ ໃນປະຕິສົນທິຂະນະ ຂັນທີ່ເປັນວິບາກອາໄສຫະໄທວັດຖຸເກີດຂຶ້ນ (໔)

ສະພາວະທຳທີ່ເປັນວິບາກ ແລະທີ່ບໍ່ເປັນວິບາກບໍ່ເປັນເຫດໃຫ້ເກີດວິບາກອາໄສສະພາວະທຳທີ່ບໍ່ເປັນວິບາກແລະບໍ່ເປັນເຫດໃຫ້ເກີດວິບາກເກີດຂຶ້ນຍ້ອນເຫດປັດໄຈ ໄດ້ແກ່ໃນປະຕິສົນທິຂະນະຂັນທີ່ເປັນວິບາກອາໄສຫະໄທວັດຖຸເກີດຂຶ້ນ ກະຕັດຕາຮູບອາໄສມະຫາພູຕະຮູບເກີດຂຶ້ນ (໓)

[໘] ສະພາວະທຳທີ່ເປັນວິບາກອາໄສສະພາວະທຳທີ່ເປັນວິບາກ ແລະທີ່ບໍ່ເປັນວິບາກບໍ່ເປັນເຫດໃຫ້ເກີດວິບາກເກີດຂຶ້ນຍ້ອນເຫດປັດໄຈ ໄດ້ແກ່ ໃນປະຕິສົນທິຂະນະ ຂັນ ໓ ອາໄສຂັນ ໑ ທີ່ເປັນວິບາກແລະຫະໄທວັດຖຸເກີດຂຶ້ນ ຯລຯ ຂັນ ໔ ອາໄສຂັນ ໔ ແລະຫະໄທວັດຖຸເກີດຂຶ້ນ (໑)

ສະພາວະທຳທີ່ບໍ່ເປັນວິບາກ ແລະບໍ່ເປັນເຫດໃຫ້ເກີດວິບາກອາໄສສະພາວະທຳທີ່ເປັນວິບາກແລະທີ່ບໍ່ເປັນວິບາກ ບໍ່ເປັນເຫດໃຫ້ເກີດວິບາກເກີດຂຶ້ນຍ້ອນເຫດປັດໄຈ ໄດ້ແກ່ ຈິດຕະ

ສະມຸດຖານຮູບອາໄສຂັນທີ່ເປັນວິບາກ ແລະມະຫາພູຕະຮູບເກີດຂຶ້ນ ໃນປະຕິສົນທິຂະນະ ກະຕັດຕາຮູບອາໄສຂັນທີ່ເປັນວິບາກ ແລະມະຫາພູຕະຮູບເກີດຂຶ້ນ (໔)

ສະພາວະທຳທີ່ເປັນວິບາກ ແລະທີ່ບໍ່ເປັນວິບາກບໍ່ເປັນເຫດໃຫ້ເກີດວິບາກອາໄສສະພາວະທຳທີ່ເປັນວິບາກ ແລະທີ່ບໍ່ເປັນວິບາກບໍ່ເປັນເຫດໃຫ້ເກີດວິບາກເກີດຂຶ້ນຍ້ອນເຫດປັດໄຈ ໄດ້ແກ່ ໃນປະຕິສົນທິຂະນະ ຂັນ ໓ ອາໄສຂັນ ໑ ທີ່ເປັນວິບາກແລະຫະໄທວັດຖຸເກີດຂຶ້ນ ໗ລ໗ ຂັນ ໔ ອາໄສຂັນ ໔ ແລະຫະໄທວັດຖຸເກີດຂຶ້ນ ກະຕັດຕະຮູບອາໄສຂັນທີ່ເປັນວິບາກ ແລະມະຫາພູຕະຮູບເກີດຂຶ້ນ (໓)

[໕] ສະພາວະທຳທີ່ບໍ່ເປັນວິບາກ ແລະບໍ່ເປັນເຫດໃຫ້ເກີດວິບາກອາໄສສະພາວະທຳທີ່ເປັນເຫດໃຫ້ເກີດວິບາກ ແລະທີ່ບໍ່ເປັນວິບາກບໍ່ເປັນເຫດໃຫ້ເກີດວິບາກເກີດຂຶ້ນຍ້ອນເຫດປັດໄຈ ໄດ້ແກ່ ຈິດຕະສະມຸດຖານຮູບອາໄສຂັນທີ່ເປັນເຫດໃຫ້ເກີດວິບາກ ແລະມະຫາພູຕະຮູບເກີດຂຶ້ນ (໑)

## ອາຣໍາມະນະປັດໄຈ

[໖] ສະພາວະທຳທີ່ເປັນວິບາກອາໄສສະພາວະທຳທີ່ເປັນວິບາກເກີດຂຶ້ນ ຍ້ອນອາຣໍາມະນະປັດໄຈ ໄດ້ແກ່ ຂັນ ໓ ອາໄສຂັນ ໑ ທີ່ເປັນວິບາກເກີດຂຶ້ນ ໗ລ໗ ຂັນ ໔ ອາໄສຂັນ ໔ ເກີດຂຶ້ນ ໃນປະຕິສົນທິຂະນະ ຂັນ ໓ ອາໄສຂັນ ໑ ທີ່ເປັນວິບາກເກີດຂຶ້ນ ໗ລ໗ ຂັນ ໔ ອາໄສຂັນ ໔ ເກີດຂຶ້ນ (໑)

[໗] ສະພາວະທຳທີ່ເປັນເຫດໃຫ້ເກີດວິບາກອາໄສສະພາວະທຳທີ່ເປັນເຫດໃຫ້ເກີດວິບາກເກີດຂຶ້ນຍ້ອນອາຣໍາມະນະປັດໄຈ ໄດ້ແກ່ ຂັນ ໓ ອາໄສຂັນ ໑ ທີ່ເປັນເຫດໃຫ້ເກີດວິບາກເກີດຂຶ້ນ ໗ລ໗ ຂັນ ໔ ອາໄສຂັນ ໔ ເກີດຂຶ້ນ (໑)

[໘] ສະພາວະທຳທີ່ບໍ່ເປັນວິບາກ ແລະບໍ່ເປັນເຫດໃຫ້ເກີດວິບາກອາໄສສະພາວະທຳທີ່ບໍ່ເປັນວິບາກ ແລະບໍ່ເປັນເຫດໃຫ້ເກີດວິບາກເກີດຂຶ້ນ ຍ້ອນອາຣໍາມະນະປັດໄຈ ໄດ້ແກ່ ຂັນ ໓ ອາໄສຂັນ ໑ ທີ່ບໍ່ເປັນວິບາກແລະບໍ່ເປັນເຫດໃຫ້ເກີດວິບາກເກີດຂຶ້ນ ໗ລ໗ ຂັນ ໔ ອາໄສຂັນ ໔ ເກີດຂຶ້ນ (໑)

ສະພາວະທຳທີ່ເປັນວິບາກອາໄສສະພາວະທຳທີ່ບໍ່ເປັນວິບາກ ແລະບໍ່ເປັນເຫດໃຫ້ເກີດວິບາກເກີດຂຶ້ນຍ້ອນອາຣໍາມະນະປັດໄຈ ໄດ້ແກ່ ໃນປະຕິສົນທິຂະນະ ຂັນທີ່ເປັນວິບາກອາໄສຫະໄທວັດຖຸເກີດຂຶ້ນ (໔)

[໙] ສະພາວະທຳທີ່ເປັນວິບາກອາໄສສະພາວະທຳທີ່ເປັນວິບາກ ແລະທີ່ບໍ່ເປັນວິບາກ ບໍ່ເປັນເຫດໃຫ້ເກີດວິບາກເກີດຂຶ້ນ ຍ້ອນອາຣໍາມະນະປັດໄຈ ໄດ້ແກ່ ໃນປະຕິສົນທິຂະນະ ຂັນ ໓

ອາໄສຂັນ ໑ ທີ່ເປັນວິບາກແລະຫະໄທວັດຖຸເກີດຂຶ້ນ ၄ລ၄ ຂັນ ໘ ອາໄສຂັນ ໘ ແລະຫະໄທວັດຖຸເກີດຂຶ້ນ (໑)

## ອະທິປະຕິປັດໄຈ

[໑໐] ສະພາວະທຳທີ່ເປັນວິບາກອາໄສສະພາວະທຳທີ່ເປັນວິບາກເກີດຂຶ້ນຍ້ອນອະທິປະຕິປັດໄຈ ໄດ້ແກ່ ຂັນ ໓ ອາໄສຂັນ ໑ ທີ່ເປັນວິບາກເກີດຂຶ້ນ ၄ລ၄ ຂັນ ໘ ອາໄສ ຂັນ ໘ ເກີດຂຶ້ນ (໑)

ສະພາວະທຳທີ່ບໍ່ເປັນວິບາກ ແລະບໍ່ເປັນເຫດໃຫ້ເກີດວິບາກອາໄສສະພາວະທຳທີ່ເປັນວິບາກເກີດຂຶ້ນຍ້ອນອະທິປະຕິປັດໄຈ ໄດ້ແກ່ ຈິດຕະສະມຸດຖານຮູບອາໄສຂັນທີ່ເປັນວິບາກເກີດຂຶ້ນ (໘)

ສະພາວະທຳທີ່ເປັນວິບາກ ແລະທີ່ບໍ່ເປັນວິບາກບໍ່ເປັນເຫດໃຫ້ເກີດວິບາກອາໄສສະພາວະທຳທີ່ເປັນວິບາກເກີດຂຶ້ນຍ້ອນອະທິປະຕິປັດໄຈ ໄດ້ແກ່ ຂັນ ໓ ແລະຈິດຕະສະມຸດຖານຮູບອາໄສຂັນ ໑ ທີ່ເປັນວິບາກເກີດຂຶ້ນ ၄ລ၄ ຂັນ ໘ ແລະຈິດຕະສະມຸດຖານຮູບອາໄສຂັນ ໘ ເກີດຂຶ້ນ (໓)

၄ລ၄ ອາໄສສະພາວະທຳທີ່ເປັນເຫດໃຫ້ເກີດວິບາກ ၄ລ၄ ມີ ໓ ວາຣະ

[໑໑] ສະພາວະທຳທີ່ບໍ່ເປັນວິບາກ ແລະບໍ່ເປັນເຫດໃຫ້ເກີດວິບາກອາໄສສະພາວະທຳທີ່ບໍ່ເປັນວິບາກ ແລະບໍ່ເປັນເຫດໃຫ້ເກີດວິບາກເກີດຂຶ້ນຍ້ອນອະທິປະຕິປັດໄຈ ໄດ້ແກ່ ຂັນ ໓ ແລະຈິດຕະສະມຸດຖານຮູບອາໄສຂັນ ໑ ທີ່ບໍ່ເປັນວິບາກແລະບໍ່ເປັນເຫດໃຫ້ເກີດວິບາກເກີດຂຶ້ນ ၄ລ၄ ຂັນ ໘ ແລະຈິດຕະສະມຸດຖານຮູບອາໄສຂັນ ໘ ເກີດຂຶ້ນ ມະຫາພູຕະຮູບ ໓ ອາໄສ ມະຫາພູຕະຮູບ ໑ ເກີດຂຶ້ນ ၄ລ၄ ຈິດຕະສະມຸດຖານຮູບທີ່ເປັນອຸປາທາຍະຮູບອາໄສມະຫາພູຕະຮູບເກີດຂຶ້ນ

[໑໘] ສະພາວະທຳທີ່ບໍ່ເປັນວິບາກ ແລະບໍ່ເປັນເຫດໃຫ້ເກີດວິບາກອາໄສສະພາວະທຳທີ່ເປັນວິບາກ ແລະທີ່ບໍ່ເປັນວິບາກບໍ່ເປັນເຫດໃຫ້ເກີດວິບາກເກີດຂຶ້ນຍ້ອນອະທິປະຕິປັດໄຈ ໄດ້ແກ່ ຈິດຕະສະມຸດຖານຮູບອາໄສຂັນທີ່ເປັນວິບາກ ແລະມະຫາພູຕະຮູບເກີດຂຶ້ນ (໑)

ສະພາວະທຳທີ່ບໍ່ເປັນວິບາກ ແລະບໍ່ເປັນເຫດໃຫ້ເກີດວິບາກອາໄສສະພາວະທຳທີ່ເປັນເຫດໃຫ້ເກີດວິບາກ ແລະທີ່ບໍ່ເປັນວິບາກບໍ່ເປັນເຫດໃຫ້ເກີດວິບາກເກີດຂຶ້ນຍ້ອນອະທິປະຕິປັດໄຈ ໄດ້ແກ່ ຈິດຕະສະມຸດຖານຮູບອາໄສຂັນທີ່ເປັນເຫດໃຫ້ເກີດວິບາກ ແລະມະຫາພູຕະຮູບເກີດຂຶ້ນ (໑)

## ອະນັນຕະຣະປັດໄຈເປັນຕົ້ນ

[໑໓] ສະພາວະທຳທີ່ເປັນວິບາກອາໄສສະພາວະທຳທີ່ເປັນວິບາກເກີດຂຶ້ນ ຍ້ອນອະນັນຕະຣະປັດໄຈ ຍ້ອນສະມະນັນຕະຣະປັດໄຈ (ປັດໄຈນີ້ເໝືອນກັບອາຣຳມະນະປັດໄຈ) ຍ້ອນສະຫະຊາຕະປັດໄຈ (ສະຫະຊາຕະປັດໄຈເໝືອນກັບເຫຕຸປັດໄຈທັງໝົດ)

ສະພາວະທຳທີ່ບໍ່ເປັນວິບາກ ແລະບໍ່ເປັນເຫດໃຫ້ເກີດວິບາກອາໄສສະພາວະທຳທີ່ບໍ່ເປັນວິບາກແລະບໍ່ເປັນເຫດໃຫ້ເກີດວິບາກເກີດຂຶ້ນ ຍ້ອນສະຫະຊາຕະປັດໄຈ ຯລຯ ທີ່ເປັນພາຍນອກ ຯລຯ ທີ່ມີອາຫານເປັນສະມຸດຖານ ຯລຯ ທີ່ມີອຸຕຸເປັນສະມຸດຖານ ຯລຯ ສຳລັບເຫຼົ່າອະສັນຍະສັດຕະພົມ (ສະຫະຊາຕະປັດໄຈມີຂໍ້ຕ່າງກັນເທົ່ານີ້)

## ອັນຍະມັນຍະປັດໄຈ

[໑໔] ສະພາວະທຳທີ່ເປັນວິບາກອາໄສສະພາວະທຳທີ່ເປັນວິບາກເກີດຂຶ້ນຍ້ອນອັນຍະມັນຍະປັດໄຈ ໄດ້ແກ່ ຂັນ ໓ ອາໄສຂັນ ໑ ທີ່ເປັນວິບາກເກີດຂຶ້ນ ຯລຯ ຂັນ ໒ ອາໄສຂັນ ໒ ເກີດຂຶ້ນ ໃນປະຕິສົນທິຂະນະ ຂັນ ໓ ອາໄສຂັນ ໑ ທີ່ເປັນວິບາກ ເກີດຂຶ້ນ ຯລຯ ຂັນ ໒ ອາໄສຂັນ ໒ ເກີດຂຶ້ນ (໑)

ສະພາວະທຳທີ່ບໍ່ເປັນວິບາກ ແລະບໍ່ເປັນເຫດໃຫ້ເກີດວິບາກອາໄສສະພາວະທຳທີ່ເປັນວິບາກ ເກີດຂຶ້ນຍ້ອນອັນຍະມັນຍະປັດໄຈ ໄດ້ແກ່ ໃນປະຕິສົນທິຂະນະ ຫະໄທວັດຖຸອາໄສຂັນທີ່ເປັນວິບາກເກີດຂຶ້ນ (໒)

ສະພາວະທຳທີ່ເປັນວິບາກ ແລະທີ່ບໍ່ເປັນວິບາກບໍ່ເປັນເຫດໃຫ້ເກີດວິບາກອາໄສສະພາວະທຳທີ່ເປັນວິບາກເກີດຂຶ້ນຍ້ອນອັນຍະມັນຍະປັດໄຈ ໄດ້ແກ່ ໃນປະຕິສົນທິຂະນະ ຂັນ ໓ ແລະຫະໄທວັດຖຸອາໄສຂັນ ໑ ທີ່ເປັນວິບາກເກີດຂຶ້ນ ຯລຯ ຂັນ ໒ ແລະຫະໄທວັດຖຸອາໄສຂັນ ໒ ເກີດຂຶ້ນ (໓)

ສະພາວະທຳທີ່ເປັນເຫດໃຫ້ເກີດວິບາກອາໄສສະພາວະທຳທີ່ເປັນເຫດໃຫ້ເກີດວິບາກເກີດຂຶ້ນ ຍ້ອນອັນຍະມັນຍະປັດໄຈ ໄດ້ແກ່ ຂັນ ໓ ອາໄສຂັນ ໑ ທີ່ເປັນເຫດໃຫ້ເກີດວິບາກ ເກີດຂຶ້ນ ຯລຯ ຂັນ ໒ ອາໄສຂັນ ໒ ເກີດຂຶ້ນ (໑)

[໑໕] ສະພາວະທຳທີ່ບໍ່ເປັນວິບາກ ແລະບໍ່ເປັນເຫດໃຫ້ເກີດວິບາກອາໄສສະພາວະທຳທີ່ບໍ່ເປັນວິບາກ ແລະບໍ່ເປັນເຫດໃຫ້ເກີດວິບາກເກີດຂຶ້ນຍ້ອນອັນຍະມັນຍະປັດໄຈ ໄດ້ແກ່ ຂັນ ໓ ອາໄສຂັນ ໑ ທີ່ບໍ່ເປັນວິບາກແລະບໍ່ເປັນເຫດໃຫ້ເກີດວິບາກເກີດຂຶ້ນ ຯລຯ ມະຫາພູຕະຣູບ ໑ ຯລຯ ທີ່ເປັນພາຍນອກ ຯລຯ ທີ່ມີອາຫານເປັນສະມຸດຖານ ຯລຯ ທີ່ມີອຸຕຸເປັນສະມຸດຖານ ຯລຯ ສຳລັບເຫຼົ່າອະສັນຍະສັດຕະພົມ ມະຫາພູຕະຣູບ ໑ ຯລຯ (໑)

ສະພາວະທຳທີ່ເປັນວິບາກອາໄສສະພາວະທຳທີ່ບໍ່ເປັນວິບາກ ແລະບໍ່ເປັນເຫດໃຫ້ເກີດວິບາກເກີດຂຶ້ນຍ້ອນອັນຍະມັນຍະປັດໄຈ ໄດ້ແກ່ ໃນປະຕິສົນທິຂະນະ ຂັນທີ່ເປັນວິບາກອາໄສຫະໄທວັດຖຸເກີດຂຶ້ນ (໔)

ສະພາວະທຳທີ່ເປັນວິບາກອາໄສສະພາວະທຳທີ່ເປັນວິບາກ ແລະທີ່ບໍ່ເປັນວິບາກບໍ່ເປັນເຫດໃຫ້ເກີດວິບາກເກີດຂຶ້ນຍ້ອນອັນຍະມັນຍະປັດໄຈ ໄດ້ແກ່ ໃນປະຕິສົນທິຂະນະ ຂັນ ໓ ອາໄສຂັນ ໑ ທີ່ເປັນວິບາກແລະຫະໄທວັດຖຸເກີດຂຶ້ນ ຯລຯ ຂັນ ໔ ອາໄສຂັນ ໔ ແລະຫະໄທວັດຖຸເກີດຂຶ້ນ (໑)

## ນິດສະຍະປັດໄຈເປັນຕົ້ນ

[໑໖] ສະພາວະທຳທີ່ເປັນວິບາກອາໄສສະພາວະທຳທີ່ເປັນວິບາກເກີດຂຶ້ນຍ້ອນນິດສະຍະປັດໄຈ (ຫຍໍ້) ຍ້ອນອຸປະນິດສະຍະປັດໄຈ ຍ້ອນປຸເຣຊາຕະປັດໄຈ

## ອາເສວະນະປັດໄຈ

[໑໗] ສະພາວະທຳທີ່ເປັນເຫດໃຫ້ເກີດວິບາກອາໄສສະພາວະທຳທີ່ເປັນເຫດໃຫ້ເກີດວິບາກເກີດຂຶ້ນຍ້ອນອາເສວະນະປັດໄຈ ໄດ້ແກ່ ຂັນ ໓ ອາໄສຂັນ ໑ ທີ່ເປັນເຫດໃຫ້ເກີດວິບາກເກີດຂຶ້ນ ຯລຯ ຂັນ ໔ ອາໄສຂັນ ໔ ເກີດຂຶ້ນ

ສະພາວະທຳທີ່ບໍ່ເປັນວິບາກ ແລະບໍ່ເປັນເຫດໃຫ້ເກີດວິບາກອາໄສສະພາວະທຳທີ່ບໍ່ເປັນວິບາກແລະບໍ່ເປັນເຫດໃຫ້ເກີດວິບາກເກີດຂຶ້ນຍ້ອນອາເສວະນະປັດໄຈ ໄດ້ແກ່ ຂັນ ໓ ອາໄສ ຂັນ ໑ ທີ່ບໍ່ເປັນວິບາກແລະບໍ່ເປັນເຫດໃຫ້ເກີດວິບາກເກີດຂຶ້ນ ຯລຯ ຂັນ ໔ ອາໄສ ຂັນ ໔ ເກີດຂຶ້ນ

## ກຳມະປັດໄຈແລະວິປາກະປັດໄຈ

[໑໘] ສະພາວະທຳທີ່ເປັນວິບາກອາໄສສະພາວະທຳທີ່ເປັນວິບາກເກີດຂຶ້ນຍ້ອນກຳມະປັດໄຈ (ຫຍໍ້) ຍ້ອນວິປາກະປັດໄຈ ມີ ໓ ວາຣະ

ສະພາວະທຳທີ່ບໍ່ເປັນວິບາກແລະບໍ່ເປັນເຫດໃຫ້ເກີດວິບາກອາໄສສະພາວະທຳທີ່ບໍ່ເປັນວິບາກ ແລະບໍ່ເປັນເຫດໃຫ້ເກີດວິບາກເກີດຂຶ້ນຍ້ອນວິປາກະປັດໄຈ ໄດ້ແກ່ ມະຫາພູຕະຮູບ ໓ ອາໄສມະຫາພູຕະຮູບ ໑ ເກີດຂຶ້ນ ຯລຯ ຈິດຕະສະມຸດຖານຮູບແລະກະຕັດຕາຮູບທີ່ເປັນອຸປາທາຍະຮູບ ອາໄສມະຫາພູຕະຮູບເກີດຂຶ້ນ (໑)

ສະພາວະທຳທີ່ເປັນວິບາກອາໄສສະພາວະທຳທີ່ບໍ່ເປັນວິບາກ ແລະບໍ່ເປັນເຫດໃຫ້ເກີດວິບາກເກີດຂຶ້ນຍ້ອນວິປາກະປັດໄຈ ໄດ້ແກ່ ໃນປະຕິສົນທິຂະນະ ຂັນທີ່ເປັນວິບາກອາໄສຫະໄທວັດຖຸເກີດຂຶ້ນ (໔)

